# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໕

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໗

## ສັງຍຸດຕະນິກາຍ ສະຄາຖະວັກ



ສະບັບຄົ້ນວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປີດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປີດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປີດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຣົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປີດົກສຳເລັດໄດ້ ๗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປີດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ๗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປີດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໕

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໗

## ສັງຍຸດຕະນິກາຍ ສະຄາຖະວັກ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສັມມາສັມພຸດທະເຈົ້າພຣະອົງນັ້ນ**

# ໑. ເທວະຕາສັງຍຸດ

# ໑. ນະລະວັກ

### ໝວດວ່າດ້ວຍຕົ້ນອໍ້

## ໑. ໂອຄະຕະຣະນະສູດ

### ວ່າດ້ວຍການຂ້າມໂອຄະ

[໑] ຂ້າພະເຈົ້າໆໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະ ງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ພຣະອົງຊົງຂ້າມໂອຄະ ໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຜູ້ມີອາຍຸ ເຮົາເອງເມື່ອບໍ່ພັກໆ ບໍ່ພຽນ ຈຶ່ງຂ້າມ ໂອຄະໄດ້

ເທວະດາທູນຖາມວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ກໍພຣະອົງເມື່ອບໍ່ພັກບໍ່ພຽນຊິງຂ້າມໂອຄະໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຜູ້ມີອາຍຸ ເມື່ອໃດເຮົານັ້ນຍັງພັກຢູ່ ເມື່ອນັ້ນເຮົາກໍຍັງຈົມຢູ່ ເມື່ອໃດເຮົາຍັງພຽນຢູ່ ເມື່ອນັ້ນເຮົາກໍຍັງລອຍຢູ່ແນ່ນອນ ເຮົາບໍ່ພັກບໍ່ພຽນ ແນວນີ້ແລ ຈຶ່ງຂ້າມໂອຄະໄດ້

ເທວະດານັ້ນ ໄດ້ກ່າວຄາຖານີ້ ວ່າ

ດົນແທ້ນໍ ຂ້າພະເຈົ້າຈຶ່ງໄດ້ພົບພາມ
ຜູ້ດັບກິເລດໄດ້ໝົດແລ້ວ ຜູ້ບໍ່ພັກບໍ່ພຽນຢູ່
ຜູ້ຂ້າມຕັນຫາອັນເປັນເຄື່ອງເກາະກ່ຽວໃນໂລກໄດ້

ເທວະດານັ້ນ ໄດ້ກ່າວຄາຖານີ້ແລ້ວ ພຣະສາດສະດາ ຊົງພໍພຣະຫະໄທແລ້ວ ຄັ້ງນັ້ນເທວະດາຄິດວ່າ ພຣະສາດສະດາຂອງເຮົາຊົງພໍພຣະຫະໄທແລ້ວ ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນ໌ແລ້ວຫາຍໂຕໄປ໌ໃນບ່ອນນັ້ນເອງ

**ໂອຄະຕະຣະນະສູດທີ ໑ ຈົບ**

# ໒. ນິໂມກຂະສູດ

## ວ່າດ້ວຍທາງລຸດພົ້ນ

[໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັນເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ພຣະອົງຊົງຮູ້ນິໂມກ (ທາງລຸດພົ້ນ) ປະໂມກ (ຄວາມລຸດພົ້ນ) ແລະວິເວກ (ຄວາມສະຫງັດ)[໑] ຂອງສັດທັງຫຼາຍບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຜູ້ມີອາຍຸ ເຮົາຮູ້ນິໂມກ ປະໂມກ ແລະ ວິເວກຂອງສັດທັງຫຼາຍ

ເທວະດາທູນຖາມວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ພຣະອົງຊົງຮູ້ນິໂມກ ປະໂມກ ແລະວິເວກຂອງສັດທັງຫຼາຍແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຜູ້ມີອາຍຸ ຍ້ອນຄວາມສິ້ນໄປແຫ່ງພົບ
ອັນມີຄວາມເພີດເພີນເປັນມູນ
ຍ້ອນຄວາມສິ້ນໄປແຫ່ງສັນຍາແລະວິນຍານ
ຍ້ອນຄວາມດັບ ຍ້ອນຄວາມສະງົບແຫ່ງເວທະນາທັງຫຼາຍ
ເຮົາຈຶ່ງຮູ້ນິໂມກ ປະໂມກ ແລະ ວິເວກຂອງສັດທັງຫຼາຍ ແນວນີ້ແລ

**ນິໂມກຂະສູດທີ ៨ ຈົບ**

# ໑. ອຸປະນີຍະສູດ

## ວ່າດ້ວຍຊີວິດຖືກຊະຣານຳເຂົ້າໄປ

[໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຊີວິດຖືກຊະຣານຳເຂົ້າໄປ ອາຍຸຈຶ່ງສັ້ນ
ຜູ້ທີ່ຖືກຊະຣານຳເຂົ້າໄປແລ້ວບໍ່ມີເຄື່ອງຕ້ານທານ
ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນທຳບຸນທີ່ນຳຄວາມສຸກມາໃຫ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊີວິດຖືກຊະຣານຳເຂົ້າໄປ ອາຍຸຈຶ່ງສັ້ນ
ຜູ້ທີ່ຖືກຊະຣານຳເຂົ້າໄປແລ້ວບໍ່ມີເຄື່ອງຕ້ານທານ
ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນລະໂລກາມິດ ມຸ້ງສູ່ສັນຕິ[໑]ເທີ້ນ

**ອຸປະນີຍະສູດທີ ໑ ຈົບ**

# ໔. ອັດເຈນຕິສູດ

## ວ່າດ້ວຍການທີ່ລ່ວງເລີຍໄປ

[໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າເຈົ້າ ວ່າ

ການ[໑]ລ່ວງເລີຍໄປ ຄືນຜ່ານພົ້ນໄປ
ເວລາແຫ່ງໄວ[໒]ລະໄປຕາມລຳດັບ
ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນທຳບຸນທີ່ນຳຄວາມສຸກມາໃຫ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ການລ່ວງເລີຍໄປ ຄືນຜ່ານພົ້ນໄປ
ເວລາແຫ່ງໄວລະໄປຕາມລຳດັບ
ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນລະໂລກາມິດ ມຸ້ງສູ່ສັນຕິເທີ້ນ[໓]

**ອັດເຈນຕິສູດທີ ໔ ຈົບ**

# ໕. ກະຕິສິນທະສູດ

## ວ່າດ້ວຍບຸກຄົນຕັດອັນໃດຈຶ່ງຂ້າມໂອຄະໄດ້

[໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ບຸກຄົນຄວນຕັດທຳທໍ່ໃດ
ຄວນລະທຳທໍ່ໃດ
ຄວນພໍ່າເພັງທຳທໍ່ໃດໃຫ້ຍິ່ງຂຶ້ນໄປ
ພິກຂຸກ້າວລ່ວງທຳເປັນເຄື່ອງຂ້ອງທໍ່ໃດ
ພຣະອົງຈຶ່ງຕັດວ່າ ຂ້າມໂອຄະໄດ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນຄວນຕັດທຳ ໕ ປະການ[໑]
ຄວນລະທຳ ໕ ປະການ[໒]
ຄວນຈະເລີນທຳ ໕ ປະການ[໓] ໃຫ້ຍິ່ງຂຶ້ນໄປ
ພິກຂຸກ້າວລ່ວງທຳເປັນເຄື່ອງຂ້ອງ ໕ ປະການ[໔]ໄດ້ແລ້ວ
ເຮົາຈຶ່ງກ່າວວ່າ ຂ້າມໂອຄະໄດ້[໕]

**ກະຕິສິນທະສູດທີ ໕ ຈົບ**

## ໖. ຊາຄະຣະສູດ

### ວ່າດ້ວຍຄວາມຕື່ນ

[໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ເມື່ອທຳທັງຫຼາຍຕື່ນຢູ່ ທຳປະເພດໃດຊື່ວ່າຫຼັບຢູ່
ເມື່ອທຳທັງຫຼາຍຫຼັບແລ້ວ ທຳປະເພດໃດຊື່ວ່າຕື່ນຢູ່
ບຸກຄົນໝັກໝົມທຸລີຄືກິເລດຍ້ອນທຳປະເພດໃດ
ບຸກຄົນບໍລິສຸດຍ້ອນທຳປະເພດໃດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ເມື່ອອິນຊີ ໕ ຕື່ນຢູ່ ນິວອນ ໕ ຊື່ວ່າຫຼັບຢູ່
ເມື່ອນິວອນ ໕ ຫຼັບແລ້ວ ອິນຊີ ໕ ຊື່ວ່າຕື່ນຢູ່
ບຸກຄົນໝັກໝົມທຸລີຄືກິເລດຍ້ອນນິວອນ ໕
ບຸກຄົນບໍລິສຸດຍ້ອນອິນຊີ ໕

**ຊາຄະຣະສູດທີ ໖ ຈົບ**

# ໗. ອັບປະຕິວິທິຕະສູດ

## ວ່າດ້ວຍຜູ້ບໍ່ຮູ້ແຈ້ງທຳ

[໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ບຸກຄົນເຫຼົ່າໃດຍັງບໍ່ຮູ້ແຈ້ງທຳ[໑]
ຍ່ອມຖືກຊັກນຳໄປໃນວາທະຂອງຄົນເຫຼົ່າອື່ນ[໒]
ບຸກຄົນເຫຼົ່ານັ້ນຫຼັບຢູ່ຍັງບໍ່ຕື່ນ
ບັດນີ້ເປັນການທີ່ບຸກຄົນເຫຼົ່ານັ້ນຄວນຈະຕື່ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນເຫຼົ່າໃດຮູ້ແຈ້ງທຳແລ້ວ
ຍ່ອມບໍ່ຖືກຊັກນຳໄປໃນວາທະຂອງຄົນເຫຼົ່າອື່ນ
ບຸກຄົນເຫຼົ່ານັ້ນຜູ້ຮູ້ດີ ຮູ້ຖືກ
ຍ່ອມດຳເນີນໄປຢ່າງສະໝໍ່າສະເໝີໃນບ່ອນທີ່ບໍ່ສະໝໍ່າສະເໝີ[໑]

**ອັບປະຕິວິທິຕະສູດທີ ໗ ຈົບ**

# ໘. ສຸສຳມຸດຖະສູດ

## ວ່າດ້ວຍຜູ້ລືມເລືອນທຳ

[໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນຜູ້ລືມເລືອນທຳ
ຍ່ອມຖືກຊັກນຳໄປໃນວາທະຂອງຄົນເຫຼົ່າອື່ນ
ບຸກຄົນເຫຼົ່ານັ້ນຫຼັບຢູ່ຍັງບໍ່ຕື່ນ
ບັດນີ້ເປັນການທີ່ບຸກຄົນເຫຼົ່ານັ້ນຄວນຈະຕື່ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນຜູ້ບໍ່ລືມເລືອນທຳ
ຍ່ອມບໍ່ຖືກຊັກນຳໄປໃນວາທະຂອງຄົນເຫຼົ່າອື່ນ
ບຸກຄົນເຫຼົ່ານັ້ນຜູ້ຮູ້ດີ ຮູ້ຖືກ
ຍ່ອມດຳເນີນໄປຢ່າງສະໝ່ຳສະເໝີໃນບ່ອນທີ່ບໍ່ສະໝ່ຳສະເໝີ

**ສຸສຳມຸດຖະສູດທີ ໗ ຈົບ**

# ໘. ມານະກາມະສູດ

## ວ່າດ້ວຍຜູ້ມີມານະ

[໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນໃນໂລກນີ້ຜູ້ມີມານະ (ຄວາມຖືໂຕ)
ຍ່ອມບໍ່ມີການເຝິກຕົນເອງ
ບຸກຄົນຜູ້ມີຈິດບໍ່ໝັ້ນຄົງຍ່ອມບໍ່ມີຄວາມຮູ້[໑]
ບຸກຄົນຜູ້ບໍ່ຜະໝາດຢູ່ໃນປ່າຄົນດຽວ
ກໍບໍ່ເຖິງຈຸດຈົບແຫ່ງຄວາມຕາຍ[໒]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນລະມານະໄດ້ແລ້ວ ມີໃຈໝັ້ນຄົງດີ
ມີໃຈດີ ລຸດພົ້ນໃນທຳທັງປວງ[໓]
ເຂົາບໍ່ຜະໝາດ ຢູ່ໃນປ່າຄົນດຽວ
ກໍເຖິງຈຸດຈົບແຫ່ງຄວາມຕາຍໄດ້

**ມານະກາມະສູດທີ ໘ ຈົບ**

# ໑໐. ອະຣັນຍະສູດ

## ວ່າດ້ວຍປ່າ

[໑໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ພິກຂຸທັງຫຼາຍຜູ້ຢູ່ໃນປ່າ ຜູ້ສະງົບ
ປະພຶດທຳອັນປະເສີດ ສັນອາຫານຄາບດຽວ
ຍ້ອນເຫດອັນໃດ ຜິວພັນຈຶ່ງຜ່ອງໃສ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

ພິກຂຸທັງຫຼາຍບໍ່ເສົ້າໂສກເຖິງອະດີດ
ບໍ່ຄິດເຖິງອະນາຄົດ ກຳນົດຢູ່ກັບປັດຈຸບັນ
ຍ້ອນເຫດນັ້ນ ຜິວພັນຈຶ່ງຜ່ອງໃສ
ຍ້ອນຄິດເຖິງອະນາຄົດ ເສົ້າໂສກເຖິງອະດີດ
ດ້ວຍເຫດນີ້ ພິກຂຸທັງຫຼາຍ ຜູ້ຈ້ຳຈຶ່ງຈ່ອຍເຫຼືອງ
ຄືຕົ້ນອໍ້ດິບທີ່ຖືກລົກຂຶ້ນແລ້ວ ສັນນັ້ນ

**ອະຣັນຍະສູດທີ ໑໐ ຈົບ**

**ນະລະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໘. ນັນທະນະວັກ

## ໝວດວ່າດ້ວຍສວນນັນທະນະວັນ

## ໑. ນັນທະນະສູດ

### ວ່າດ້ວຍສວນນັນທະນະວັນ

[໑໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ເທວະດາຊັ້ນດາວະດຶງສາອົງໜຶ່ງ ມີເຫຼົ່ານາງອັບປະສອນຮ້ອມລ້ອມ ເອີບອີ່ມພ້ອມພຽງດ້ວຍກາມມະຄຸນ ໕ ອັນເປັນທິບ ໄດ້ຮັບການບຳລຸງປິ່ນເປີຢູ່ ໃນສວນນັນທະນະວັນ ໃນເວລານັ້ນ ໄດ້ກ່າວຄາຖານີ້ ວ່າ

ເທວະດາເຫຼົ່າໃດຍັງບໍ່ເຄີຍເຫັນສວນນັນທະນະວັນ
ອັນເປັນບ່ອນຢູ່ຂອງພວກນະຣະເທບຜູ້ມີຍົດ ຊັ້ນໄຕຣທິດ
ເທວະດາເຫຼົ່ານັ້ນຍັງບໍ່ຮູ້ຈັກຄວາມສຸກ

ພິກຂຸທັງຫຼາຍ ເມື່ອເທວະດາອົງໜຶ່ງກ່າວແນວນີ້ແລ້ວ ອີກອົງໜຶ່ງໄດ້ກ່າວຄາຖາຕອບເທວະດານັ້ນ ວ່າ

ເທວະດາຜູ້ຈ໊າ ທ່ານບໍ່ຮູ້ຈັກຄຳເວົ້າ
ຂອງພຣະອະຣະຫັນທັງຫຼາຍວ່າ ສັງຂານ°ທັງປວງ ບໍ່ທ່ຽງ
ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ
ເກີດຂຶ້ນແລ້ວຍ່ອມດັບໄປ
ຄວາມສະງົບລະງັບສັງຂານເຫຼົ່ານັ້ນເປັນຄວາມສຸກ

**ນັນທະນະສູດທີ ໑ ຈົບ**

# ໘. ນັນທະຕິສູດ

## ວ່າດ້ວຍຄວາມຍິນດີ

[໑໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ ໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຄົນມີບຸດຍ່ອມຍິນດີຍ້ອນບຸດ
ຄົນມີງົວຍ່ອມຍິນດີຍ້ອນງົວຄືກັນ
ຍ້ອນອຸປະທິ° ເຮັດໃຫ້ນໍຣະຊົນຍິນດີ
ສະນັ້ນ ຄົນທີ່ຂາດອຸປະທິຈຶ່ງບໍ່ຍິນດີ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຄົນມີບຸດຍ່ອມເສົ້າໂສກຍ້ອນບຸດ
ຄົນມີງົວຍ່ອມເສົ້າໂສກຍ້ອນງົວຄືກັນ
ຍ້ອນອຸປະທິເຮັດໃຫ້ນໍຣະຊົນເສົ້າໂສກ
ສະນັ້ນ ຄົນທີ່ຂາດອຸປະທິຈຶ່ງບໍ່ເສົ້າໂສກ

**ນັນທະຕິສູດທີ ໘ ຈົບ**

# ໙. ນັດຖິປຸດຕະສະມະສູດ

## ວ່າດ້ວຍສິ່ງທີ່ສະເໝີດ້ວຍບຸດບໍ່ມີ

[໑໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ ໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຄວາມຮັກສະເໝີດ້ວຍບຸດບໍ່ມີ
ຊັບສະເໝີດ້ວຍງົວບໍ່ມີ
ແສງສະຫວ່າງສະເໝີດ້ວຍດວງອາທິດບໍ່ມີ
ແຫຼ່ງນໍ້າທັງຫຼາຍມີສະມຸດເປັນເລີດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຄວາມຮັກສະເໝີດ້ວຍຕົນບໍ່ມີ
ຊັບສະເໝີດ້ວຍເຂົ້າເປືອກບໍ່ມີ
ແສງສະຫວ່າງສະເໝີດ້ວຍປັນຍາບໍ່ມີ
ຝົນຈັດເປັນແຫຼ່ງນໍ້າຊັ້ນເລີດ

**ນັດຖິປຸດຕະສະມະສູດທີ ໓ ຈົບ**

## ໔. ຂັດຕິຍະສູດ

### ວ່າດ້ວຍກະສັດ

[໑໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ບັນດາສັດສອງຕີນ ກະສັດປະເສີດທີ່ສຸດ
ບັນດາສັດສີ່ຕີນ ງົວພະລີພັດປະເສີດທີ່ສຸດ
ບັນດາພັນລະຍາ ພັນລະຍາທີ່ເປັນກຸມາຣີປະເສີດທີ່ສຸດ
ບັນດາບຸດ ບຸດທີ່ເກີດກ່ອນປະເສີດທີ່ສຸດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບັນດາສັດສອງຕີນ ພຣະສໍາມາສໍາພຸດທະເຈົ້າປະເສີດທີ່ສຸດ
ບັນດາສັດສີ່ຕີນ ສັດອາຊາໄນປະເສີດທີ່ສຸດ
ບັນດາພັນລະຍາ ພັນລະຍາຜູ້ເຊື່ອຟັງດີປະເສີດທີ່ສຸດ
ບັນດາບຸດ ບຸດຜູ້ເຊື່ອຟັງປະເສີດທີ່ສຸດ

**ຂັດຕິຍະສູດທີ ໔ ຈົບ**

## ໕. ສະນະມານະສູດ

### ວ່າດ້ວຍສຽງປ່າຄວນຄາງ

[໑໕] ເທວະດາກ່າວ ວ່າ

ເມື່ອຝູງນົກພາກັນພັກຮ້ອນຢູ່ໃນເວລາທ່ຽງວັນ
ປ່າໃຫຍ່ສົ່ງສຽງຄືກັບວ່າຄວນຄາງຢູ່
ສຽງຄວນຄາງແຫ່ງປ່າໃຫຍ່ນັ້ນ
ຜາກົດເປັນສິ່ງທີ່ເປັນຕາຢ້ານແກ່ຂ້າພະເຈົ້າ໌

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ເມື່ອຝູງນົກພາກັນພັກຮ້ອນຢູ່ໃນເວລາທ່ຽງວັນ
ປ່າໃຫຍ່ສົ່ງສຽງຄືກັບວ່າຄວນຄາງຢູ່
ສຽງຄວນຄາງແຫ່ງປ່າໃຫຍ່ນັ້ນ
ຜາກົດເປັນສິ່ງທີ່ໜ້າຍິນດີແກ່ເຮົາ໌

**ສະນະມານະສູດທີ ໕ ຈົບ**

## ໖. ນິດທາຕັນທິສູດ

### ວ່າດ້ວຍຄວາມຫຼັບແລະຄວາມຂີ້ຄ້ານ

[໑໖] ເທວະດາກ່າວ ວ່າ

ອະຣິຍະມັກ໌ ບໍ່ຜາກົດແກ່ເຫຼົ່າສັດໃນໂລກນີ້
ຍ້ອນຄວາມຫຼັບ ຄວາມຂີ້ຄ້ານ ການຢຽດກາຍ
ຄວາມບໍ່ຍິນດີແລະຄວາມເມົາອາຫານ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຍ້ອນໃຊ້ຄວາມພຽນກຳຈັດຄວາມຫຼັບ
ຄວາມຂີ້ຄ້ານ ການຢຽດຄີງ
ຄວາມບໍ່ຍິນດີແລະຄວາມເມົາອາຫານນັ້ນ
ອະຣິຍະມັກ໌ຈຶ່ງບໍລິສຸດໄດ້

**ນິດທາຕັນທິສູດທີ ໖ ຈົບ**

# ໗. ທຸກກະຣະສູດ
## ວ່າດ້ວຍສະມະນະທຳທີ່ເຮັດໄດ້ຍາກ

[໑໗] ເທວະດາກ່າວ ວ່າ

ສະມະນະທຳ ຄົນບໍ່ສະຫຼາດເຮັດໄດ້ຍາກ ອົດທົນໄດ້ຍາກ
ຍ້ອນສະມະນະທຳນັ້ນມີຄວາມຄັບແຄບຫຼາຍ
ສຳລັບຄົນພານທີ່ອາໄສຢູ່

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຄົນພານປະພຶດສະມະນະທຳເປັນເວລາດົນ
ຫາກບໍ່ຫ້າມຈິດ ເຂົາຕົກຢູ່ໃນອຳນາດແຫ່ງຄວາມດຳຣິ
ກໍຈະເພິ່ງຕິດຂັດໃນທຸກບົດ[១]
ຫາກພິກຂຸຍັບຍັ້ງຄວາມວິຕົກໃນໃຈໄວ້ໄດ້
ຄືເຕົ່າຫົດອະໄວຍະວະໄວ້ໃນກະດອງຂອງຕົນ
ກໍຈະບໍ່ມີຕັນຫາແລະທິດຖິອາໄສ ບໍ່ບຽດບຽນສັດອື່ນ
ດັບເຢັນແລ້ວ ບໍ່ເພິ່ງວ່າຮ້າຍໃຜ

**ທຸກກະຣະສູດທີ ໗ ຈົບ**

# ໘. ຫິຣິສູດ
## ວ່າດ້ວຍຫິຣິ

[໑໘] ເທວະດາກ່າວ ວ່າ

ຄົນຜູ້ກີດກັນ(ອະກຸສົນທຳ) ໄດ້ດ້ວຍຫິຣິ ມີຢູ່ໜ້ອຍໃນໂລກ
ພິກຂຸໃດຫຼີບຫຼີກນິນທາໄດ້ ຕື່ນໂຕຢູ່
ຄືມ້າຊັ້ນດີຫຼີບແສ້ໄດ້
ພິກຂຸເຊັ່ນນັ້ນມີຢູ່ໜ້ອຍ[໒]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພິກຂຸເຫຼົ່າໃດຜູ້ກີດກັນ (ອະກຸສົນທຳ) ໄດ້ດ້ວຍຫິຣິ

ມີສະຕິ ປະພຶດທຳຢູ່ຕະຫຼອດ ເຖິງບ່ອນສຸດແຫ່ງທຸກ
ຍ່ອມດຳເນີນໄປຢ່າງສະໝ່ຳສະເໝີໃນບ່ອນທີ່ບໍ່ສະໝ່ຳສະເໝີ
ພິກຂຸເຫຼົ່ານັ້ນມີຢູ່ໜ້ອຍ

**ທີຣິສູດທີ ໗ ຈົບ**

# ໘. ກຸຕິກາສູດ

## ວ່າດ້ວຍຕູບ

[໑໘] ເທວະດາທູນຖາມ ວ່າ

ທ່ານບໍ່ມີຕູບບໍ?
ທ່ານບໍ່ມີຮັງບໍ?
ທ່ານບໍ່ມີຜູ້ສືບສະກຸນບໍ?
ທ່ານເປັນຜູ້ລຸດພົ້ນຈາກເຄື່ອງມັດແລ້ວບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

ແມ່ນແທ້ ເຮົາບໍ່ມີຕູບ
ແມ່ນແທ້ ເຮົາບໍ່ມີຮັງ
ແມ່ນແທ້ ເຮົາບໍ່ມີຜູ້ສືບສະກຸນ
ແມ່ນແທ້ ເຮົາເປັນຜູ້ລຸດພົ້ນຈາກເຄື່ອງມັດແລ້ວ

ເທວະດາທູນຖາມວ່າ

ຕູບທີ່ຂ້າພະເຈົ້າກ່າວກັບທ່ານ ຄືອັນໃດ?
ຮັງທີ່ຂ້າພະເຈົ້າກ່າວກັບທ່ານ ຄືອັນໃດ?
ຜູ້ສືບສະກຸນທີ່ຂ້າພະເຈົ້າກ່າວກັບທ່ານ ຄືອັນໃດ?
ເຄື່ອງມັດທີ່ຂ້າພະເຈົ້າກ່າວກັບທ່ານ ຄືອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

ຕູບທີ່ທ່ານກ່າວກັບເຮົາ ຄືມານດາ
ຮັງທີ່ທ່ານກ່າວກັບເຮົາ ຄືພັນລະຍາ
ຜູ້ສືບສະກຸນທີ່ທ່ານກ່າວກັບເຮົາ ຄືບຸດ

ເຄື່ອງມັດທີ່ທ່ານກ່າວກັບເຮົາ ຄືຕັນຫາ
ເທວະດາກ່າວວ່າ

ດີແທ້ ທ່ານບໍ່ມີຕູບ
ດີແທ້ ທ່ານບໍ່ມີຮັງ
ດີແທ້ ທ່ານບໍ່ມີຜູ້ສືບສະກຸນ
ດີແທ້ ທ່ານເປັນຜູ້ລຸດພົ້ນຈາກເຄື່ອງມັດແລ້ວ

**ກຸຕິກາສູດທີ ໙ ຈົບ**

# ໑໐. ສະມິດທິສູດ

## ວ່າດ້ວຍພຣະສະມິດທິ

[໔໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຕະໂປທາຣາມ ເຂດນະຄອນຣາດຊະຄື ຄັ້ງນັ້ນ ທ່ານພຣະສະມິດທິລຸກຂຶ້ນແຕ່ເຊົ້າມືດ ໄປສູ່ແມ່ນ້ຳຕະໂປທາເພື່ອອາບນ້ຳ ອາບແລ້ວຂຶ້ນມາມີຈີວອນ ຜືນດຽວ໋ໄດ້ຢືນຖ້າໃຫ້ໂຕແຫ້ງຢູ່ ຄັນເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວແມ່ນ້ຳຕະໂປທາ ເຂົ້າໄປຫາທ່ານພຣະສະມິດທິຮອດບ່ອນຢູ່ແລ້ວຢືນຢູ່ ໃນອາກາດໄດ້ກ່າວກັບທ່ານພຣະສະມິດທິດ້ວຍຄາຖາ ວ່າ

ພິກຂຸ ທ່ານບໍ່ບໍຣິໂພກແຕ່ຍັງຂໍຢູ່
ທ່ານບໍຣິໂພກແລ້ວກໍຕ້ອງບໍ່ຂໍ
ພິກຂຸ ທ່ານບໍຣິໂພກແລ້ວຈຶ່ງຂໍເທີ້ນ
ການເວລາ໌ຢ່າໄດ້ລ່ວງຜ່ານທ່ານໄປເລີຍ

ທ່ານພຣະສະມິດທິກ່າວ ວ່າ

ຂ້າພະເຈົ້າຍັງບໍ່ຮູ້ຈັກການເວລາ
ຍ້ອນການເວລາຖືກປົກປິດຢູ່ຍັງບໍ່ຜາກົດ
ສະນັ້ນ ເຖິງຂ້າພະເຈົ້າບໍ່ບໍຣິໂພກແຕ່ກໍຍັງຂໍຢູ່
ການເວລາ໋ຢ່າໄດ້ລ່ວງຜ່ານຂ້າພະເຈົ້າໄປເລີຍ

ຄັ້ງນັ້ນ ເທວະດານັ້ນ ລົງມາຢືນຢູ່ທີ່ພື້ນດິນແລ້ວໄດ້ກ່າວກັບທ່ານພຣະສະມິດທິວ່າ ພິກຂຸ

ທ່ານເປັນນັກບວດທີ່ຍັງໜຸ່ມແໜ້ນມີຜົມດຳປອດ ຢູ່ໃນໄວພວມເປັນບ່າວເຕີບໃຫຍ່ ບໍ່ເພີດເພີນໃນການທັງຫຼາຍ ຂໍທ່ານຈົ່ງບໍຣິໂພກການທັງຫຼາຍອັນເປັນຂອງມະນຸດເທີ້ນ ຢ່າລະການທີ່ເຫັນສະເພາະໜ້າແລ້ວແລ່ນໄປຫາການອັນມີຢູ່ຕາມການ໌ເລີຍ

ທ່ານພຣະສະມິດທິກ່າວວ່າ ເທວະດາ ຂ້າພະເຈົ້າບໍ່ໄດ້ລະການທີ່ເຫັນສະເພາະໜ້າແລ້ວແລ່ນໄປຫາການອັນມີຢູ່ຕາມການເລີຍ ຂ້າພະເຈົ້າລະການອັນມີຢູ່ຕາມການແລ້ວແລ່ນໄປຫາທຳທີ່ເຫັນສະເພາະໜ້າ ການທັງຫຼາຍອັນມີຢູ່ຕາມການພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນການນີ້ມີໂທດເຫຼືອປະມານ ທຳນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນ ເພິ່ງຮູ້ສະເພາະຕົນ

ເທວະດາກ່າວວ່າ ພິກຂຸ ກໍການທັງຫຼາຍ ອັນມີຢູ່ຕາມການພຣະຜູ້ມີພຣະພາກເຈົ້າຕັດວ່າ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນການນີ້ມີໂທດເຫຼືອປະມານ ເປັນແນວໃດ? ທຳນີ້ເປັນທຳ ທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງຄວນນ້ອມ ເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເປັນແນວໃດ?

ທ່ານພຣະສະມິດທິກ່າວວ່າ ເທວະດາ ຂ້າພະເຈົ້າເອງເປັນພຣະໃໝ່ ບວດມາບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ ຂ້າພະເຈົ້າບໍ່ອາດຈະບອກທ່ານໂດຍພິດສະດານໄດ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ປະທັບຢູ່ຕະໂປທາຣາມ ເຂດນະຄອນຣາດຊະຄຶ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມຂໍ້ຄວາມນັ້ນ ແລ້ວເພິ່ງຈື່ຂໍ້ຄວາມນັ້ນໄວ້ຕາມທີ່ພຣະອົງຊົງສະເຫຼີຍເທີ້ນ

ເທວະດາກ່າວວ່າ ພິກຂຸ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພວກເທວະດາຜູ້ມີສັກໃຫຍ່ທັງຫຼາຍເຫຼົ່າອື່ນຮ້ອມລ້ອມຢູ່ ພວກຂ້າພະເຈົ້າຈະເຂົ້າໄປເຝົ້າບໍ່ໄດ້ງ່າຍດອກ ຫາກທ່ານເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ ແມ່ນພວກຂ້າພະເຈົ້າກໍຈະມາຟັງທຳນຳ

ທ່ານພຣະສະມິດທິຮັບຄຳຂອງເທວະດານັ້ນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງ ໄດ້ລຸກຂຶ້ນແຕ່ເຊົ້າມືດໄປສູ່ແມ່ນ້ຳຕະໂປທາເພື່ອອາບນ້ຳ ອາບແລ້ວຂຶ້ນມາ ມີຈີວອນຜືນດຽວໄດ້ຢືນຖ້າໃຫ້ໂຕແຫ້ງຢູ່ ຄັນເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວແມ່ນ້ຳຕະໂປທາ ເຂົ້າມາຫາຂ້າພຣະອົງຮອດບ່ອນຢູ່ແລ້ວຢືນຢູ່ໃນອາກາດ ໄດ້ກ່າວຄາຖານີ້ ວ່າ

ພິກຂຸ ທ່ານບໍ່ບໍຣິໂພກແຕ່ຍັງຂໍຢູ່

ທ່ານບໍຣິໂພກແລ້ວກໍຕ້ອງບໍ່ຂໍ
ພິກຂຸ ທ່ານບໍຣິໂພກແລ້ວຈຶ່ງຂໍເທີ້ນ
ການເວລາຢ່າໄດ້ລ່ວງຜ່ານທ່ານໄປເລີຍ

ເມື່ອເທວະດາກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບເທວະດານັ້ນ ດ້ວຍຄາຖາ ວ່າ

ຂ້າພະເຈົ້າຍັງບໍ່ຮູ້ຈັກການເວລາເລີຍ
ຍ້ອນການເວລາຖືກປົກປິດຢູ່ຍັງບໍ່ຜາກົດ
ດັ່ງນັ້ນ ເຖິງຂ້າພະເຈົ້າບໍ່ບໍຣິໂພກແຕ່ກໍຍັງຂໍຢູ່
ການເວລາຢ່າໄດ້ລ່ວງຜ່ານຂ້າພະເຈົ້າໄປເລີຍ

ຄັ້ງນັ້ນ ເທວະດານັ້ນລົງມາຢືນຢູ່ທີ່ພື້ນດິນ ແລ້ວໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ ພິກຂຸ ທ່ານເປັນນັກບວດທີ່ຍັງໜຸ່ມແໜ້ນມີຜົມດຳປອດ ຢູ່ໃນໄວພອນເປັນບ່າວເຕີບໃຫຍ່ ບໍ່ເພີດເພີນໃນການທັງຫຼາຍ ຂໍທ່ານຈົ່ງບໍຣິໂພກການທັງຫຼາຍອັນເປັນຂອງມະນຸດເທີ້ນ ຢ່າລະການທີ່ເຫັນສະເພາະໜ້າແລ້ວ ແລ່ນໄປຫາການອັນມີຢູ່ຕາມການເລີຍ

ເມື່ອເທວະດານັ້ນກ່າວແນວນີ້ແລ້ວ ຂ້າພຣະອົງຈຶ່ງໄດ້ກ່າວກັບເທວະດານັ້ນດັ່ງນີ້ວ່າ ເທວະດາ ຂ້າພະເຈົ້າບໍ່ໄດ້ລະການທີ່ເຫັນສະເພາະໜ້າແລ້ວ ແລ່ນໄປຫາການອັນມີຢູ່ຕາມການເລີຍ ຂ້າພະເຈົ້າລະການອັນມີຢູ່ຕາມການແລ້ວ ແລ່ນໄປຫາທຳທີ່ເຫັນສະເພາະໜ້າ ການທັງຫຼາຍອັນມີຢູ່ຕາມການພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນການນີ້ ມີໂທດເຫຼືອປະມານ ທຳນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ເທວະດານັ້ນ ໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ ພິກຂຸ ກໍການທັງຫຼາຍ ອັນມີຢູ່ຕາມການພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນການນີ້ມີໂທດເຫຼືອປະມານ ເປັນແນວໃດ? ທຳນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງ ເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເປັນແນວໃດ?

ເມື່ອເທວະດາກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບເທວະດານັ້ນດັ່ງນີ້ວ່າ ເທວະດາ ຂ້າພະເຈົ້າເອງເປັນພຣະໃໝ່ ບວດມາບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ ຂ້າພະເຈົ້າບໍ່ອາດຈະບອກທ່ານໂດຍພິດສະດານໄດ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ປະທັບຢູ່ຕະໂປທາຣາມ ເຂດນະຄອນຣາດຊະຄຶ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ແລ້ວທູນຖາມຂໍ້ຄວາມນັ້ນແລ້ວ ເພິ່ງຈື່ຂໍ້ຄວາມນັ້ນຕາມທີ່ພຣະອົງຊົງສະເຫຼີຍ

ເທີ້ນ

ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ເທວະດານັ້ນ ໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ ພິກຂຸ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພວກເທວະດາຜູ້ມີສັກໃຫຍ່ທັງຫຼາຍເຫຼົ່າອື່ນ ຮ້ອມລ້ອມຢູ່ ພວກຂ້າພະເຈົ້າຈະເຂົ້າໄປເຝົ້າບໍ່ໄດ້ງ່າຍດອກ ຫາກທ່ານເຂົ້າໄປເຝົ້າພຣະຜູ້ມີ ພຣະພາກເຈົ້າ ແລ້ວທູນຖາມຂໍ້ຄວາມນີ້ແທນ ແມ່ນພວກຂ້າພະເຈົ້າກໍຈະມາຟັງທຳນຳ ຂ້າແດ່ພຣະອົງຜູ້ຈະເລີນ ຖ້າຄຳຂອງເທວະດານັ້ນເປັນຈິງ ເທວະດານັ້ນກໍຄວນມາໃກ້ຕະໂປທາຣາມນີ້

ເມື່ອທ່ານພຣະສະມິດທິຂາບທູນແນວນີ້ແລ້ວ ເທວະດານັ້ນ ໄດ້ກ່າວກັບທ່ານພຣະສະມິດທິດັ່ງນີ້ວ່າ ທູນຖາມເທີ້ນ ທູນຖາມເທີ້ນ ພິກຂຸ ຂ້າພະເຈົ້ານຳມາຮອດບ່ອນນີ້ແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກເທວະດານັ້ນ ດ້ວຍຄາຖາທັງຫຼາຍ ວ່າ

ສັດທັງຫຼາຍມີຄວາມໝາຍຮູ້ໃນສິ່ງທີ່ຮຽກຂານ[๑]
ຕິດຢູ່ໃນສິ່ງທີ່ຮຽກຂານ[໒]
ບໍ່ກຳນົດຮູ້ສິ່ງທີ່ຮຽກຂານ
ຈຶ່ງຕົກຢູ່ໃຕ້ອຳນາດແຫ່ງຄວາມຕາຍ

ສ່ວນພິກຂຸກຳນົດຮູ້ສິ່ງທີ່ຮຽກຂານແລ້ວ[໓]
ບໍ່ກຳນົດໝາຍສິ່ງທີ່ຮຽກຂານ
ຍ້ອນສິ່ງທີ່ຮຽກຂານນັ້ນບໍ່ມີແກ່ພິກຂຸນັ້ນ
ສະນັ້ນ ເຫດທີ່ຈະຮຽກຂານທ່ານຈຶ່ງບໍ່ມີ

ຍັກ[໔] ຖ້າທ່ານຮູ້ແຈ້ງກໍຈົ່ງບອກມາເທີ້ນ

ເທວະດານັ້ນ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ຮູ້ທົ່ວເຖິງເນື້ອຄວາມ ແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໆ ນີ້ ໂດຍພິດສະດານໄດ້ ຂໍປະທານວະໂຣກາດຂໍພຣະຜູ້ມີພຣະພາກເຈົ້າ ໄດ້ໂຜດຕັດໃຫ້ຂ້າພຣະອົງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດທີ່ພຣະອົງ ຕັດໄວ້ຫຍໍ້ ໆ ນີ້ໂດຍພິດສະດານເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດຄາຖານີ້ ວ່າ

ບຸກຄົນໃດຖືໂຕວ່າເຮົາສະເໝີເຂົາ
ເຮົາເລີດກວ່າເຂົາ ຫຼື ເຮົາຕ່ຳຕ້ອຍກວ່າເຂົາ
ບຸກຄົນນັ້ນ ກໍເພິ່ງຜິດຖຽງກັບເຂົາ ຍ້ອນຄວາມຖືໂຕນັ້ນ

ບຸກຄົນຜູ້ບໍ່ຫວັ່ນໄຫວໃນຄວາມຖືໂຕທັງ ໓ ນັ້ນ
ຍ່ອມບໍ່ມີຄວາມຖືໂຕວ່າເຮົາສະເໝີເຂົາ
ເຮົາເລີດກວ່າເຂົາ ຫຼືເຮົາຕ່ຳຕ້ອຍກວ່າເຂົາ

ຍັກ ຖ້າທ່ານຮູ້ແຈ້ງກໍຈົ່ງບອກມາເທີ້ນ

ເທວະດານັ້ນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໆ ນີ້ ໂດຍພິດສະດານໄດ້ ຂໍປະທານອະໂຣກາດຂໍພຣະຜູ້ມີພຣະພາກເຈົ້າ ໄດ້ໂຜດຕັດໃຫ້ຂ້າພຣະອົງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດທີ່ພຣະອົງຕັດໄວ້ຫຍໍ້ ໆ ນີ້ໂດຍພິດສະດານດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດຄາຖານີ້ ວ່າ

ບຸກຄົນລະບັນຍັດໄດ້ແລ້ວ ບໍ່ເຂົ້າເຖິງວິມານ[១]
ຕັດຕັນຫາໃນນາມຮູບນີ້ໄດ້ແລ້ວ
ເທວະດາແລະມະນຸດໃນໂລກນີ້ ຫຼື ໃນໂລກອື່ນ
ໃນສະຫວັນ ຫຼື ໃນສະຖານທີ່ຢູ່ອາໄສຂອງສັດທຸກຈຳພວກ[៦]
ເຖິງຈະທ່ຽວຄົ້ນຫາກໍບໍ່ພົ້ບຸກຄົນນັ້ນ
ຜູ້ຕັດກິເລດເຄື່ອງມັດໄດ້ແລ້ວ ຂາດທຸກໝົດຄວາມຢາກ

ຍັກ ຖ້າທ່ານຮູ້ແຈ້ງກໍຈົ່ງບອກມາເທີ້ນ

ເທວະດານັ້ນ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໆ ນີ້ ໂດຍພິດສະດານແນວນີ້ ວ່າ

ບຸກຄົນບໍ່ຄວນເຮັດບາບທາງກາຍ ທາງວາຈາ
ຫຼື ທາງໃຈ ທາງໃດທາງໜຶ່ງໃນໂລກທັງປວງ
ຄວນລະກາມທັງຫຼາຍ ມີສະຕິສຳປະຊັນຍະ
ບໍ່ເພິ່ງສະເຫວີຍທຸກອັນປະກອບດ້ວຍສິ່ງທີ່ບໍ່ເປັນປະໂຫຍດ

**ສະມິດທິສູດທີ ໑໐ ຈົບ**

**ນັນທະນະວັກທີ ໔ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື



# ໓. ສັດຕິວັກ

## ໝວດວ່າດ້ວຍຫອກ

# ໑. ສັດຕິສູດ

## ວ່າດ້ວຍຫອກ

[໔໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເທວະດານັ້ນ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີ ພຣະພາກວ່າ

ພິກຂຸເພິ່ງຢູ່ຢ່າງມີສະຕິ ເພື່ອລະການຣາຄະ
ຄືບຸກຄົນຖືກແທງດ້ວຍຫອກ ມຸ້ງຖອດຫອກອອກ
ຄືບຸກຄົນຖືກໄຟໄໝ້ຢູ່ເທິງຫົວ ມຸ້ງດັບໄຟ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພິກຂຸເພິ່ງຢູ່ຢ່າງມີສະຕິ ເພື່ອລະສັກກາຍະທິດຖິ
ຄືບຸກຄົນຖືກແທງດ້ວຍຫອກ ມຸ້ງຖອດຫອກອອກ
ຄືບຸກຄົນຖືກໄຟໄໝ້ຢູ່ເທິງຫົວ ມຸ້ງດັບໄຟ ສັນນັ້ນ[១]

**ສັດຕິສູດທີ ໑ ຈົບ**

# ໘. ຜຸສະຕິສູດ

## ວ່າດ້ວຍການຖືກຕ້ອງ

[໘໘] ເທວະດາກ່າວວ່າ

ວິບາກກຳຍ່ອມບໍ່ຖືກຕ້ອງບຸກຄົນຜູ້ບໍ່ຖືກຕ້ອງ[໑]
ແຕ່ຖືກຕ້ອງບຸກຄົນຜູ້ຖືກຕ້ອງທີ່ນັ້ນ
ຍ້ອນແນວນັ້ນ ວິບາກກຳຈຶ່ງຖືກຕ້ອງບຸກຄົນຜູ້ຖືກຕ້ອງ
ຜູ້ປະທຸດສະຮ້າຍບຸກຄົນຜູ້ບໍ່ປະທຸດສະຮ້າຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຜູ້ໃດປະທຸດສະຮ້າຍບຸກຄົນຜູ້ບໍ່ປະທຸດສະຮ້າຍ
ເຊິ່ງເປັນຜູ້ບໍລິສຸດ ບໍ່ມີກິເລດພຽງດັ່ງເນີນ[໒]
ບາບຍ່ອມກັບມາເຖິງຜູ້ນັ້ນ ເຊິ່ງເປັນຄົນພານຢ່າງແນ່ແທ້
ຄືຝຸ່ນທຸລີອັນລະອຽດທີ່ບຸກຄົນຊັດໄປທວນລົມແລ້ວ ສັນນັ້ນ[໓]

**ຜຸສະຕິສູດທີ ໘ ຈົບ**

# ໙. ຊະຕາສູດ

## ວ່າດ້ວຍຄວາມຫຍຸ້ງ

[໘໙] ເທວະດາທູນຖາມ ວ່າ

ໝູ່ສັດຫຍຸ້ງທັງພາຍໃນ ຫຍຸ້ງທັງພາຍນອກ
ຖືກຄວາມຫຍຸ້ງພາໃຫ້ນຸງນັງແລ້ວ ຂ້າແດ່ພຣະໂຄດົມ
ຍ້ອນແນວນັ້ນ ຂ້າພຣະອົງຂໍທູນຖາມພຣະອົງວ່າ
ໃຜເພິ່ງແກ້ຄວາມຫຍຸ້ງນີ້ໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ນໍຣະຊົນຜູ້ມີປັນຍາ ເຫັນໄພໃນສັງສາຣະວັດ
ດຳລົງຢູ່ໃນສິນແລ້ວ ຈະເລີນຈິດແລະປັນຍາ[໑]
ມີຄວາມພຽນ ມີປັນຍາເຄື່ອງບໍລິຫານ

ນັ້ນເພິ່ງແກ້ຄວາມຫຍຸ້ງນີ້ໄດ້

ບຸກຄົນເຫຼົ່າໃດກໍາຈັດຣາຄະ ໂທສະ ແລະອະວິດຊາໄດ້ແລ້ວ
ບຸກຄົນເຫຼົ່ານັ້ນ ສິ້ນອາສະວະແລ້ວ ເປັນພຣະອະຣະຫັນ
ພວກເຂົາແກ້ຄວາມຫຍຸ້ງໄດ້ແລ້ວ
ນາມ[໒]ກໍດີ ຣູບກໍດີ ປະຕິຄະສັນຍາກໍດີ
ຣູບສັນຍາກໍດີ[໓] ດັບບໍ່ເຫຼືອໃນບ່ອນໃດ
ຄວາມຫຍຸ້ງນັ້ນ ກໍຍ່ອມສູນຫາຍໄປໃນບ່ອນນັ້ນ[໔]

**ຊະຕາສູດທີ ໓ ຈົບ**

## ໔. ມະໂນນິວາຣະນະສູດ

### ວ່າດ້ວຍການຫ້າມໃຈ

[໒໔] ເທວະດາຂາບທູນ ວ່າ

ບຸກຄົນຫ້າມໃຈຈາກອາລົມໃດ ໆ ໄດ້
ທຸກຍ້ອນອາລົມນັ້ນ ໆ ຍ່ອມບໍ່ມາເຖິງເຂົາ
ເຂົາຫ້າມໃຈຈາກອາລົມທັງປວງໄດ້
ຍ່ອມພົ້ນຈາກທຸກ ຍ້ອນອາລົມທັງປວງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນບໍ່ເພິ່ງຫ້າມໃຈຈາກອາລົມທັງປວງ
ບໍ່ເພິ່ງຫ້າມໃຈທີ່ເຖິງຄວາມສັງລວມ[໑]
ບາບເກີດຂຶ້ນຈາກອາລົມໃດ ໆ
ເພິ່ງຫ້າມໃຈຈາກອາລົມນັ້ນ ໆ

**ມະໂນນິວາຣະນະສູດທີ ໔ ຈົບ**

## ໕. ອະຣະຫັນຕະສູດ

### ວ່າດ້ວຍພຣະອະຣະຫັນ

[໒໕] ເທວະດາກ່າວວ່າ

ພິກຂຸໃດເປັນພຣະອະຣະຫັນ ເຮັດກິດສຳເລັດແລ້ວ
ສິ້ນອາສະວະແລ້ວ ເຫຼືອແຕ່ຮ່າງກາຍໃນຊາດສຸດທ້າຍ
ພິກຂຸນັ້ນກ່າວວ່າ ເຮົາເວົ້າດັ່ງນີ້ແດ່
ກ່າວວ່າ ຄົນທັງຫຼາຍເວົ້າກັບເຮົາດັ່ງນີ້ແດ່

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພິກຂຸໃດ ເປັນພຣະອະຣະຫັນ ເຮັດກິດສຳເລັດແລ້ວ
ສິ້ນອາສະວະແລ້ວ ເຫຼືອແຕ່ຮ່າງກາຍໃນຊາດສຸດທ້າຍ
ພິກຂຸນັ້ນກ່າວວ່າ ເຮົາເວົ້າດັ່ງນີ້ແດ່
ກ່າວວ່າ ຄົນທັງຫຼາຍເວົ້າກັບເຮົາດັ່ງນີ້ແດ່
ພິກຂຸນັ້ນ ເປັນຜູ້ສະຫຼາດ ຮູ້ຄຳເວົ້າທີ່ຮູ້ກັນໃນໂລກ
ທ່ານກ່າວຕາມສົມມຸດທີ່ເຂົາເວົ້າກັນ

ເທວະດານັ້ນ ທູນຖາມ ວ່າ

ພິກຂຸໃດ ເປັນພຣະອະຣະຫັນ ເຮັດກິດສຳເລັດແລ້ວ
ສິ້ນອາສະວະແລ້ວ ເຫຼືອແຕ່ຮ່າງກາຍໃນຊາດສຸດທ້າຍ
ພິກຂຸນັ້ນ ຍັງຕິດມານະຢູ່ບໍ່ນໍ
ຈຶ່ງກ່າວວ່າ ເຮົາເວົ້າດັ່ງນີ້ແດ່
ກ່າວວ່າ ຄົນທັງຫຼາຍເວົ້າກັບເຮົາດັ່ງນີ້ແດ່

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ກິເລດເຄື່ອງມັດທັງຫຼາຍບໍ່ມີແກ່ພິກຂຸຜູ້ລະມານະໄດ້ແລ້ວ
ມານະແລະກິເລດເຄື່ອງມັດທັງປວງອັນພິກຂຸນັ້ນກຳຈັດໄດ້ແລ້ວ
ພິກຂຸຜູ້ມີປັນຍາດີລ່ວງພົ້ນຄວາມຖືໂຕໄດ້ແລ້ວ
ພິກຂຸນັ້ນ ກ່າວວ່າ ເຮົາເວົ້າດັ່ງນີ້ແດ່
ກ່າວວ່າ ຄົນທັງຫຼາຍເວົ້າກັບເຮົາດັ່ງນີ້ແດ່
ພິກຂຸນັ້ນ ເປັນຜູ້ສະຫຼາດ ຮູ້ຄຳເວົ້າທີ່ຮູ້ກັນໃນໂລກ
ທ່ານກ່າວຕາມສົມມຸດທີ່ເຂົາເວົ້າກັນ

**ອະຣະຫັນຕະສູດທີ ໕ ຈົບ**

# ๗. ປັດໂຊຕະສູດ

## ວ່າດ້ວຍແສງສະຫວ່າງ

[๘๗] ເທວະດາທູນຖາມ ວ່າ

ໂລກຮຸ່ງເຮືອງຍ້ອນແສງສະຫວ່າງເຫຼົ່າໃດ
ແສງສະຫວ່າງເຫຼົ່ານັ້ນມີຢູ່ທີ່ໃດໃນໂລກ
ພວກຂ້າພຣະອົງມາເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າວ່າ
ຈະຮູ້ແສງສະຫວ່າງນັ້ນໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ໃນໂລກມີແສງສະຫວ່າງຢູ່ ๔ ຢ່າງ
ຢ່າງທີ ๕ ບໍ່ມີໃນໂລກນີ້ ຄື
(๑) ດວງອາທິດສ່ອງສະຫວ່າງໃນກາງເວັນ
(๒) ດວງຈັນສ່ອງສະຫວ່າງໃນກາງຄືນ
(๓) ໄຟສ່ອງສະຫວ່າງທັງກາງເວັນແລະກາງຄືນທຸກຫົນທຸກແຫ່ງ
(๔) ພຣະສໍາມາສໍາພຸດທະເຈົ້າປະເສີດກວ່າແສງສະຫວ່າງທັງຫຼາຍ
ແສງສະຫວ່າງນີ້ໆເປັນແສງສະຫວ່າງຢ່າງປະເສີດ

**ປັດໂຊຕະສູດທີ ๗ ຈົບ**

# ๘. ສະຣະສູດ

## ວ່າດ້ວຍຄວາມແລ່ນໄປ

[๘๘] ເທວະດາທູນຖາມ ວ່າ

ຄວາມແລ່ນໄປຈະຢຸດຢູ່ໃສ
ວັດຕະບໍ່ວົນວຽນຢູ່ໃສ
ນາມແລະຮູບດັບບໍ່ເຫຼືອຢູ່ໃສ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ດິນ ນໍ້າ ໄຟ ລົມ ຕັ້ງຢູ່ບໍ່ໄດ້ບ່ອນໃດ

ຄວາມແລ່ນໄປຍ່ອມຢຸດບ່ອນນີ້
ວັດຕະບໍ່ວົນວຽນບ່ອນນີ້
ນາມແລະຮູບດັບບໍ່ເຫຼືອບ່ອນນີ້

**ສະຣະສູດທີ ໗ ຈົບ**

## ໘. ມະຫັດທະນະສູດ
### ວ່າດ້ວຍຜູ້ມີຊັບຫຼາຍ

[໔໘] ເທວະດາທູນຖາມ ວ່າ

ກະສັດທັງຫຼາຍມີຊັບຫຼາຍ ມີໂພຄະຫຼາຍ
ທັງມີແວ່ນແຄວັນ ບໍ່ຮູ້ຈັກພໍໃນກາມທັງຫຼາຍ
ຕ່າງແຂ່ງຂັນກັນແລະກັນ
ເມື່ອກະສັດເຫຼົ່ານັ້ນພາກັນຂົນຂວາຍ
ແລ່ນໄປຕາມກະແສແຫ່ງພົບ
ບຸກຄົນເຫຼົ່າ ໃດນໍ? ບໍ່ມີຄວາມຂົນຂວາຍ
ລະຄວາມໂກດແລະຕັນຫາໃນໂລກໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນທັງຫຼາຍສະລະເຮືອນ ສະລະລູກ
ແລະສະລະສັດລ້ຽງອັນເປັນທີ່ຮັກ ບວດ
ກຳຈັດຣາຄະ ໂທສະ ແລະ ອະວິດຊາໄດ້
ສິ້ນອາສະວະແລ້ວ ເປັນພຣະອະຣະຫັນ
ບຸກຄົນເຫຼົ່ານີ້ເປັນຜູ້ບໍ່ມີຄວາມຂົນຂວາຍໃນໂລກ

**ມະຫັດທະນະສູດທີ ໘ ຈົບ**

## ໙. ຈະຕຸຈັກກະສູດ
### ວ່າດ້ວຍສະຣີຣະຍົນ ໔ ລໍ້

[໔໙] ເທວະດາທູນຖາມ ວ່າ

ຂ້າແດ່ ພຣະມະຫາວີຣະເຈົ້າ ສະຣີຣະຍົນ ໔ ລໍ້[1]
ມີປະຕູ ໗ ປະຕູ[2] ເຕັມໄປດ້ວຍຂອງບໍ່ສະອາດ
ຖືກໂລພະປະກອບໄວ້ ເປັນຄືເປືອກຕົມ
ສະຣີຣະຍົນນັ້ນ ຈັກແລ່ນໄປໄດ້ແນວໃດ?[3]

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຍ້ອນຕັດຊະເນາະ[1] ເຊືອກໜັງ[2]
ຕັດຄວາມປາຖະໜາແລະຄວາມໂລບອັນຊົ່ວຊາມ
ແລະຍ້ອນຂຸດຕັນຫາພ້ອມທັງຮາກໄດ້
ສະຣີຣະຍົນນັ້ນຈັກແລ່ນໄປໄດ້ແນວນີ້[3]

**ຈະຕຸຈັກກະສູດທີ ໙ ຈົບ**

## ໑໐. ເອນີຊັງຄະສູດ

### ວ່າດ້ວຍພຣະຜູ້ມີພຣະຊົງຄືໂຕຊາຍ

[໓໐] ເທວະດາກ່າວ ວ່າ

ພວກຂ້າພຣະອົງພາກັນມາເຝົ້າ ຂໍທູນຖາມພຣະອົງ
ຜູ້ມີພຣະຊົງຄືໂຕຊາຍ ມີພຣະວໍຣະກາຍສົມສ່ວນ
ມີຄວາມພຽນ ສັນພຣະກະຍາຫານໜ້ອຍ ບໍ່ມີຄວາມໂລເລ
ເປັນຄືຣາດຊະສີແລະຊ້າງທ່ຽວໄປຕາມລຳພັງ
ບໍ່ມີຄວາມຫ່ວງໃນກາມທັງຫຼາຍ
ວ່າ ບຸກຄົນລຸດພົ້ນຈາກທຸກໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ກາມມະຄຸນ[1] ໕ ມີໃຈເປັນທີ ໖
ບັນດິດປະກາດໄວ້ຊັດແຈ້ງແລ້ວໃນໂລກ
ບຸກຄົນລະຄວາມພໍໃຈໃນນາມຮູບ[2]ນີ້
ຍ່ອມລຸດພົ້ນຈາກທຸກໄດ້ແນວນີ້

**ເອນີຊັງຄະສູດທີ ໑໐ ຈົບ**

**ສັດຕິວັກທີ ໓ ຈົບ**

### ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ສະຕຸນລະປະກາຍິກະວັກ

### ໝວດວ່າດ້ວຍພວກເທວະດາສະຕຸນລະປະກາຍິກາ

## ໑. ສັບພິສູດ

### ວ່າດ້ວຍສັດຕະບຸຣຸດ

[໓໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ເມື່ອຣາຕີຜ່ານໄປ ພວກເທວະດາສະຕຸນລະປະກາຍິກາ[໑] ຈຳນວນຫຼາຍມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ

ເມື່ອເທວະດາອົງໜຶ່ງຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳ[໒]ຂອງພວກສັດຕະບຸຣຸດແລ້ວ
ຍ່ອມເປັນຜູ້ປະເສີດ ບໍ່ເປັນຜູ້ຕົກຕ່ຳ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ

ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວຍ່ອມໄດ້ປັນຍາ
ບໍ່ໄດ້ປັນຍາຈາກຄົນອັນທະພານອື່ນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມບໍ່ເສົ້າໂສກໃນທ່າມກາງຄົນຜູ້ເສົ້າໂສກ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມຮຸ່ງເຮືອງໃນທ່າມກາງແຫ່ງຍາດ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ສັດທັງຫຼາຍຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ ຍ່ອມໄປສູ່ສຸຄະຕິ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ສັດທັງຫຼາຍຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມດຳລົງຢູ່ໄດ້ຕະຫຼອດໄປ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຄຳຂອງໃຜນໍ? ເປັນສຸພາສິດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ຄຳຂອງພວກທ່ານທັງໝົດ ເປັນສຸພາສິດໂດຍອ້ອມ ແຕ່ຂໍໃຫ້ພວກທ່ານຈົ່ງຟັງຄຳຂອງເຮົາແດ່

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທັ່ງນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມລຸດພົ້ນຈາກທຸກທັງປວງ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຄາຖານີ້ແລ້ວ ເທວະດາເຫຼົ່ານັ້ນ ມີໃຈຍິນດີຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

**ສັບພິສູດທີ ໑ ຈົບ**

# ໒. ມັດສະຣິສູດ

## ວ່າດ້ວຍຄົນຂີ້ຖີ່

[໓໒] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ພວກເທວະດາສະຕຸນລະປະກາຍິກາຈຳນວນຫຼາຍມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ

ເທວະດາອົງໜຶ່ງ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຍ້ອນຄວາມຂີ້ຖີ່ແລະຄວາມຜະໝາດ
ບຸກຄົນຈຶ່ງໃຫ້ທານແນວນີ້ບໍ່ໄດ້
ບຸກຄົນຜູ້ຫວັງບຸນຮູ້ແຈ້ງຢູ່ຈຶ່ງໃຫ້ທານໄດ້

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖາເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຄົນຂີ້ຖີ່ຢ້ານສິ່ງໃດແລ້ວບໍ່ໃຫ້ທານ
ສິ່ງນັ້ນ ໆ ເອງເປັນໄພແກ່ເຂົາຜູ້ບໍ່ໃຫ້
ຄວາມຫິວແລະຄວາມຢາກທີ່ຄົນຂີ້ຖີ່ຢ້ານ
ຍ່ອມຖືກຕ້ອງເຂົານັ້ນເອງເຊິ່ງເປັນຄົນຈ້າ
ທັງໃນໂລກນີ້ແລະໃນໂລກໜ້າ
ສະນັ້ນ ບຸກຄົນຄວນກຳຈັດຄວາມຂີ້ຖີ່

ຄອບງຳມົນທິນແລ້ວໃຫ້ທານເທີ້ນ
ຍ້ອນບຸນເປັນບ່ອນເພິ່ງຂອງສັດທັງຫຼາຍໃນໂລກໜ້າ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖາເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຄົນເຫຼົ່າໃດເມື່ອຂອງມີໜ້ອຍກໍແບ່ງໃຫ້ໄດ້
ຄືຄົນເດີນທາງໄກແບ່ງຂອງໃຫ້ເພື່ອນຮ່ວມທາງ
ເມື່ອຄົນເຫຼົ່າອື່ນຕາຍ ຄົນເຫຼົ່ານັ້ນຊື່ວ່າບໍ່ຕາຍ
ທຳນີ້ເປັນທຳເກົ່າແກ່
ຄົນພວກໜຶ່ງເມື່ອມີຂອງໜ້ອຍກໍແບ່ງໃຫ້ໄດ້
ພວກໜຶ່ງມີຂອງຫຼາຍກັບແບ່ງໃຫ້ບໍ່ໄດ້
ທັກຂິນາທີ່ໃຫ້ຈາກຂອງໜ້ອຍ ນັບວ່າທໍ່ກັບຂອງເປັນພັນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖາເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ພວກຄົນພານເມື່ອຈະໃຫ້ທານກໍໃຫ້ຍາກ
ເມື່ອຈະເຮັດວຽກກໍເຮັດຍາກ
ພວກອະສັດຕະບຸຣຸດຍ່ອມບໍ່ເຮັດຕາມທຳຂອງສັດຕະບຸຣຸດ
ຍ້ອນທຳຂອງສັດຕະບຸຣຸດດຳເນີນຕາມໄດ້ແສນຍາກ
ດັ່ງນັ້ນ ການໄປຈາກໂລກນີ້ຂອງພວກສັດຕະບຸຣຸດ
ແລະອະສັດຕະບຸຣຸດຈຶ່ງແຕກຕ່າງກັນ
ພວກອະສັດຕະບຸຣຸດພາກັນລົງນະຮົກ
ສ່ວນພວກສັດຕະບຸຣຸດພາກັນຂຶ້ນສະຫວັນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຄຳຂອງໃຜນໍ? ເປັນສຸພາສິດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ຄຳຂອງພວກທ່ານທັງໝົດເປັນສຸພາສິດໂດຍອ້ອມ ແຕ່ຂໍໃຫ້ພວກທ່ານຈົ່ງຟັງຄຳຂອງເຮົາແດ່

ແມ່ນບຸກຄົນໃດປະພຶດຕົນໃຫ້ຫຍຸ້ງຍາກລ້ຽງເບິ່ງພັນລະຍາ
ແລະເມື່ອຂອງມີໜ້ອຍກໍໃຫ້ໄດ້

ບຸກຄົນນັ້ນຊື່ວ່າປະພຶດທຳ
ເມື່ອບຸຣຸດ ໑໐໐,໐໐໐ ຄົນ ບູຊາພິກຂຸ ໑,໐໐໐ ອົງ
ການບູຊາຂອງບຸຣຸດເຫຼົ່ານັ້ນ
ຈຶ່ງມີຄ່າບໍ່ທໍ່ສ້ຽວໜຶ່ງຂອງບຸກຄົນເຊັ່ນນັ້ນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ຍ້ອນເຫດໃດ ການບູຊາອັນໃຫຍ່ຫຼວງນີ້
ຈຶ່ງມີຄ່າບໍ່ທໍ່ສ່ວນແຫ່ງທານທີ່ບຸກຄົນໃຫ້ດ້ວຍຄວາມເໝາະສົມ
ເມື່ອບຸຣຸດ ໑໐໐,໐໐໐ ຄົນ ບູຊາພິກຂຸ ໑,໐໐໐ ອົງ
ການບູຊາຂອງບຸຣຸດເຫຼົ່ານັ້ນ
ຈຶ່ງມີຄ່າບໍ່ທໍ່ສ້ຽວໜຶ່ງຂອງບຸກຄົນເຊັ່ນນັ້ນ ໄດ້ແນວໃດ?

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຕອບເທວະດານັ້ນດ້ວຍຄາຖາ ວ່າ

ບຸກຄົນພວກໜຶ່ງດຳລົງຢູ່ໃນຄວາມບໍ່ເໝາະສົມ
ທຳຮ້າຍເຂົາ ຂ້າເຂົາ ຫຼື ເຮັດໃຫ້ເຂົາເສົ້າໂສກແລ້ວຈຶ່ງໃຫ້ທານ
ທັກຂິນານັ້ນ ຈັດເປັນທັກຂິນາອັນມີໜ້ານອງດ້ວຍນ້ຳຕາ
ເປັນໄປກັບດ້ວຍອາດຍາ ຈຶ່ງມີຄ່າບໍ່ທໍ່ສ່ວນແຫ່ງທານ
ທີ່ໃຫ້ດ້ວຍຄວາມເໝາະສົມ
ເມື່ອບຸຣຸດ ໑໐໐,໐໐໐ ຄົນ ບູຊາພິກຂຸ ໑,໐໐໐ ອົງ
ການບູຊາຂອງບຸຣຸດເຫຼົ່ານັ້ນ
ຈຶ່ງມີຄ່າບໍ່ທໍ່ສ້ຽວໜຶ່ງຂອງບຸກຄົນເຊັ່ນນັ້ນ ໄດ້ແນວນີ້

**ມັດສະຣີສູດທີ ໘ ຈົບ**

## ໓. ສາທຸສູດ

### ວ່າດ້ວຍຜົນສຳເລັດແຫ່ງທານ

[໓໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັນເມື່ອຣາຕີຜ່ານໄປ ພວກເທວະດາສະຕຸນລະປະກາຍິກາຈຳນວນຫຼາຍ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວຢືນຢູ່ບ່ອນທີ່ສົມຄວນ

ເມື່ອເທວະດາອົງໜຶ່ງ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ເປ່ງອຸທານນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຂ້າແດ່ ພຣະອົງຜູ້ນິຣະທຸກ ທານໃຫ້ປະໂຫຍດສຳເລັດໄດ້ຈິງ

ແມ່ນເມື່ອຂອງມີໜ້ອຍ ທານກໍໃຫ້ປະໂຫຍດສຳເລັດໄດ້
ຍ້ອນຄວາມຂີ້ຖີ່ແລະຄວາມຜະໝາດ
ບຸກຄົນຈຶ່ງໃຫ້ທານແນວນີ້ບໍ່ໄດ້
ບຸກຄົນຜູ້ຫວັງບຸນຮູ້ແຈ້ງຢູ່ຈຶ່ງໃຫ້ທານໄດ້

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຂ້າແດ່ ພຣະອົງຜູ້ນິຣະທຸກ ທານໃຫ້ປະໂຫຍດສຳເລັດໄດ້ຈິງ
ອັນໜຶ່ງ ແມ່ນເມື່ອຂອງມີໜ້ອຍ ທານກໍໃຫ້ປະໂຫຍດສຳເລັດໄດ້
ຄົນພວກໜຶ່ງເມື່ອຂອງມີໜ້ອຍກໍແບ່ງໃຫ້ໄດ້
ພວກໜຶ່ງມີຂອງຫຼາຍກັບແບ່ງໃຫ້ບໍ່ໄດ້
ທັກຂິນາທີ່ໃຫ້ຈາກຂອງໜ້ອຍ ນັບວ່າທໍ່ກັບຂອງເປັນພັນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຂ້າແດ່ ພຣະອົງຜູ້ນິຣະທຸກ ທານໃຫ້ປະໂຫຍດສຳເລັດໄດ້ຈິງແທ້
ແມ່ນເມື່ອຂອງມີໜ້ອຍ ທານກໍໃຫ້ປະໂຫຍດສຳເລັດໄດ້
ອັນໜຶ່ງ ທານທີ່ໃຫ້ແມ່ນດ້ວຍສັດທາກໍໃຫ້ປະໂຫຍດສຳເລັດໄດ້
ນັກປາດທັງຫຼາຍກ່າວວ່າ ທານກັບການຮົບສະເໝີກັນ
ພວກວິລະບຸລຸດແມ່ນມີໜ້ອຍກໍເອົາຊະນະຄົນຂີ້ຢ້ານທີ່ຫລາຍກວ່າໄດ້
ຖ້າບຸກຄົນມີສັດທາ ຍ່ອມໃຫ້ສິ່ງຂອງແມ່ນມີໜ້ອຍໄດ້
ຍ້ອນເຫດນັ້ນ ທາຍົກນີ້ຈຶ່ງເປັນຜູ້ມີຄວາມສຸກໃນໂລກໜ້າ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຂ້າແດ່ ພຣະອົງຜູ້ນິຣະທຸກ ທານໃຫ້ປະໂຫຍດສຳເລັດໄດ້ຈິງ
ແມ່ນເມື່ອຂອງມີໜ້ອຍ ທານກໍໃຫ້ປະໂຫຍດສຳເລັດໄດ້
ທານທີ່ໃຫ້ແມ່ນດ້ວຍສັດທາກໍໃຫ້ປະໂຫຍດສຳເລັດໄດ້
ອັນໜຶ່ງ ທານທີ່ໃຫ້ແມ່ນແກ່ບຸກຄົນຜູ້ໄດ້ທຳ⁹ແລ້ວກໍຍິ່ງເປັນການດີ
ບຸກຄົນໃດໃຫ້ທານແກ່ບຸກຄົນຜູ້ໄດ້ທຳແລ້ວ

ຜູ້ມີຄວາມຂະຫຍັນໝັ່ນພຽນອັນຕົນບັນລຸແລ້ວ
ບຸກຄົນນັ້ນ ຂ້າມພົ້ນນະຣົກແຫ່ງຍົມມະຣາດໄດ້ແລ້ວເຂົ້າເຖິງຖານະອັນເປັນທິບ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຂ້າແດ່ ພຣະອົງຜູ້ນິຣະທຸກ ທານໃຫ້ປະໂຫຍດສຳເລັດໄດ້ຈິງ
ແມ່ນເມື່ອຂອງມີໜ້ອຍ ທານກໍໃຫ້ປະໂຫຍດສຳເລັດໄດ້
ທານທີ່ໃຫ້ແມ່ນດ້ວຍສັດທາກໍໃຫ້ປະໂຫຍດສຳເລັດໄດ້
ທານທີ່ໃຫ້ແກ່ບຸກຄົນຜູ້ໄດ້ທຳແລ້ວກໍຍິ່ງເປັນການດີ
ອັນໜຶ່ງ ແມ່ນທານທີ່ບຸກຄົນເລືອກໃຫ້ກໍເປັນທານໃຫ້ປະໂຫຍດສຳເລັດໄດ້
ທານທີ່ບຸກຄົນເລືອກໃຫ້ ພຣະສຸຄົດເຈົ້າຊົງສັນເສີນແລ້ວ
ບຸກຄົນເຫຼົ່າໃດ ຄວນແກ່ທັກຂິນາມີຢູ່ໃນໂລກຄືໝູ່ສັດນີ້
ທານທັງຫຼາຍທີ່ບຸກຄົນເລືອກໃຫ້ແລ້ວໃນບຸກຄົນເຫຼົ່ານັ້ນຍ່ອມມີຜົນຫຼາຍ
ຄືພືດທັງຫຼາຍທີ່ບຸກຄົນຫວ່ານລົງໃນນາຊັ້ນດີ ສັນນັ້ນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຂ້າແດ່ ພຣະອົງຜູ້ນິຣະທຸກ ທານໃຫ້ປະໂຫຍດສຳເລັດໄດ້ຈິງແທ້
ແມ່ນເມື່ອຂອງມີໜ້ອຍ ທານກໍໃຫ້ປະໂຫຍດສຳເລັດໄດ້
ທານທີ່ໃຫ້ແມ່ນດ້ວຍສັດທາກໍຍັງປະໂຫຍດໃຫ້ສຳເລັດໄດ້
ທານທີ່ໃຫ້ແກ່ບຸກຄົນຜູ້ໄດ້ທຳແລ້ວກໍຍິ່ງເປັນການດີ
ທານທີ່ບຸກຄົນເລືອກໃຫ້ກໍຍິ່ງເປັນການດີ

ອັນໜຶ່ງ ຄວາມສັງລວມແມ່ນໃນສັດທັງຫຼາຍກໍຍິ່ງເປັນການດີ
ບຸກຄົນໃດບໍ່ບຽດບຽນສັດທັງຫຼາຍ
ບໍ່ເຮັດບາບຍ້ອນຄຳຕິຕຽນຈາກຜູ້ອື່ນ
ບັນດິດທັງຫຼາຍຍ່ອມສັນເສີນບຸກຄົນນັ້ນ ເຊິ່ງເປັນຄົນຢ້ານບາບ
ແຕ່ບໍ່ສັນເສີນບຸກຄົນຜູ້ກ້າໃນການເຮັດບາບນັ້ນ
ສັດຕະບຸຣຸດທັງຫຼາຍຍ່ອມບໍ່ເຮັດບາບ ຍ້ອນຢ້ານບາບຢ່າງແທ້ຈິງ

ລຳດັບນັ້ນ ເທວະດາອີກອົງໜຶ່ງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຄຳຂອງໃຜນໍ? ເປັນສຸພາສິດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ຄຳເວົ້າຂອງພວກທ່ານທັງໝົດເປັນສຸພາສິດໂດຍອ້ອມ

ແຕ່ຂໍໃຫ້ພວກທ່ານຈົ່ງຟັງຄໍາຂອງເຮົາແດ່

ຄວາມຈິງ ທານທີ່ໃຫ້ດ້ວຍສັດທາບັນດິດສັນເສີນໄວ້ຫຼາຍ
ແຕ່ບົດແຫ່ງທໍາ⁹ປະເສີດກວ່າທານ
ຍ້ອນວ່າສັດຕະບຸຣຸດທັງຫຼາຍຜູ້ມີປັນຍາ
ໃນການກ່ອນກໍດີ ໃນການກ່ອນ ໆ ພຸ້ນອີກກໍດີ ໄດ້ບັນລຸນິບພານຍ້ອນທໍາ

**ສາທຸສູດທີ ໓ ຈົບ**

# ໔. ນະສັນຕິສູດ

## ວ່າດ້ວຍຄວາມບໍ່ມີ

[໓໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ພວກເທວະດາສະຕຸນລະປະກາຍິກາຈໍານວນຫຼາຍ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ

ເມື່ອ ເທວະດາອົງໜຶ່ງຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ ໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ໃນໝູ່ມະນຸດ ການທີ່ໜ້າຕ້ອງການເຊິ່ງຄົນເກາະກ່ຽວມົວເມົາຢູ່
ຈົນບໍ່ບັນລຸນິບພານອັນເປັນເຫດບໍ່ຫວນກັບມາສູ່ແດນມັດຈຸອີກ
ການນັ້ນຈະຊື່ວ່າທ່ຽງແທ້ບໍ່ມີ
ຄວາມລໍາບາກເກີດຈາກສັນທະ (ຄວາມພໍໃຈ) ທຸກເກີດຈາກສັນທະ
ຍ້ອນກໍາຈັດສັນທະໄດ້ ຈຶ່ງກໍາຈັດຄວາມລໍາບາກໄດ້
ຍ້ອນກໍາຈັດຄວາມລໍາບາກໄດ້ ຈຶ່ງກໍາຈັດທຸກໄດ້
ອາລົມອັນງາມທັງຫຼາຍໃນໂລກ ຍັງບໍ່ຈັດເປັນການ
ຄວາມກໍາໜັດທີ່ເກີດຈາກຄວາມດໍາຣິເປັນການຂອງບຸກຄົນ
ອາລົມອັນງາມທັງຫຼາຍຕັ້ງມີຢູ່ໃນໂລກແນວນັ້ນເອງ

ດັ່ງນັ້ນ ບຸກຄົນຜູ້ມີປັນຍາທັງຫຼາຍ ຈຶ່ງກໍາຈັດສັນທະໃນອາລົມເຫຼົ່ານັ້ນ
ບຸກຄົນຄວນລະຄວາມໂກດ ສະລະມານະ
ກ້າວລ່ວງສັງໂຍດ⁹ໄດ້ໝົດທຸກຢ່າງ

ຄວາມທຸກຍ່ອມບໍ່ສຸມໃສ່ຄົນນັ້ນ ຜູ້ບໍ່ຕິດຢູ່ໃນນາມຮູບ
ຜູ້ບໍ່ມີກິເລດເຄື່ອງກັງວົນ[១]

ພິກຂຸລະບັນຍັດແລ້ວ ບໍ່ເຂົ້າເຖິງວິມານ
ຕັດຕັນຫາໃນນາມຮູບນີ້ໄດ້ແລ້ວ
ເທວະດາແລະມະນຸດໃນໂລກນີ້ກໍດີ ໃນໂລກອື່ນກໍດີ
ໃນສະຫວັນກໍດີ ໃນສະຖານທີ່ອັນເປັນບ່ອນອາໄສແຫ່ງສັດທັງປວງກໍດີ
ພາກັນທ່ຽວຄົ້ນຫາກໍບໍ່ພົ້ພິກຂຸນັ້ນ
ຜູ້ຕັດເຄື່ອງມັດຂາດແລ້ວ ບໍ່ມີຄວາມທຸກ ບໍ່ມີຕັນຫາ

(ທ່ານພຣະໂມຄະຣາດທູນຖາມວ່າ)

ຫາກເທວະດາແລະມະນຸດເຫຼົ່າໃດໃນໂລກນີ້ຫຼືໃນໂລກອື່ນ
ບໍ່ໄດ້ເຫັນພິກຂຸນັ້ນຜູ້ອຸດົມກວ່ານໍຣະຊົນ
ຜູ້ພໍ່າເພັງປະໂຫຍດເພື່ອນໍຣະຊົນ ຜູ້ລຸດພົ້ນແນວນັ້ນ
ນອບນ້ອມພິກຂຸນັ້ນຢູ່
ເທວະດາແລະມະນຸດເຫຼົ່ານັ້ນບັນດິດຄວນສັນເສີນບໍ?

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸໂມຄະຣາດ)

ເທວະດາແລະມະນຸດແມ່ນເຫຼົ່ານັ້ນບັນດິດຄວນສັນເສີນ
ເທວະດາແລະມະນຸດເຫຼົ່າໃດນອບນ້ອມພິກຂຸຜູ້ລຸດພົ້ນແນວນັ້ນ
ເທວະດາແລະມະນຸດແມ່ນເຫຼົ່ານັ້ນຮູ້ທຳແລ້ວ ລະວິຈິກິດສາໄດ້ແລ້ວ
ເປັນຜູ້ຂ້າມພົ້ນທຳເປັນເຄື່ອງຂ້ອງໄດ້

**ນະສັນຕິສູດທີ ໔ ຈົບ**

# ໕. ອຸດຊານະສັນຍິສູດ

## ວ່າດ້ວຍພວກເທວະດາຜູ້ມຸ້ງໝາຍຈະເພ່ງໂທດ

[໓໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ພວກເທວະດາຜູ້ມຸ້ງໝາຍ ຈະເພ່ງໂທດຈຳນວນຫຼາຍມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຢືນຢູ່ໃນອາກາດ

ເທວະດາອົງໜຶ່ງ ຢືນຢູ່ໃນອາກາດໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກ ເຈົ້າວ່າ

ບຸກຄົນໃດ ຕົນເປັນແນວໜຶ່ງ
ກັບປະກາດໃຫ້ເຂົາຮູ້ເປັນອີກແນວໜຶ່ງ
ບຸກຄົນນັ້ນຊື່ວ່າລວງເຂົາບໍຣິໂພກໂດຍຄວາມເປັນຜູ້ລັກ
ຄືພານນົກລວງຈັບນົກ ສັນນັ້ນ
ຄວາມຈິງ ບຸກຄົນເຮັດກຳໃດ ຄວນເວົ້າເຖິງກຳນັ້ນ
ບໍ່ເຮັດກຳໃດ ກໍບໍ່ຄວນເວົ້າເຖິງກຳນັ້ນ
ບັນດິດທັງຫຼາຍຮູ້ຈັກບຸກຄົນຜູ້ບໍ່ເຮັດ ດີແຕ່ເວົ້າ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ໃຜ ໆ ບໍ່ອາດດຳເນີນປະຕິປະທານີ້
ດ້ວຍເຫດຈັກວ່າເວົ້າ ຫຼື ຟັງແນວດຽວ
ຜູ້ມີປັນຍາທັງຫຼາຍມີຄວາມພຽນເພ່ງພິນິດ
ຍ່ອມພົ້ນຈາກເຄື່ອງມັດຂອງມານດ້ວຍປະຕິປະທາອັນໝັ້ນຄົງນີ້
ຜູ້ມີປັນຍາທັງຫຼາຍຮູ້ຄວາມເປັນໄປຂອງໂລກ
ຮູ້ແຈ້ງ ດັບກິເລດໄດ້ແລ້ວ ຂ້າມພົ້ນຕັນຫາເປັນເຄື່ອງຂ້ອງໃນໂລກແລ້ວ
ຍ່ອມບໍ່ເວົ້າໂດຍແທ້

ຄັ້ງນັ້ນ ເທວະດາເຫຼົ່ານັ້ນ ລົງມາຢືນຢູ່ເທິງພື້ນດິນ ໝອບລົງແທບພຣະບາດທັງສອງ ຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພຣະອົງໄດ້ກະທຳຄວາມຜິດຍ້ອນຄວາມໂງ່ຈ້າເບົາປັນຍາ ພວກຂ້າພຣະອົງໄດ້ສຳຄັນຜິດວ່າ ພຣະຜູ້ມີພຣະພາກເຈົ້າອັນພວກເຮົາເພິ່ງຮຸກຮານໄດ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດອະໄພໂທດແກ່ພວກຂ້າພຣະອົງ ເພື່ອສັງລວມຕໍ່ໄປດ້ວຍເທີ້ນ ຂ້ານ້ອຍ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຍິ້ມ

ຄັ້ງນັ້ນ ເທວະດາເຫຼົ່ານັ້ນ ຜູ້ເພ່ງໂທດໂດຍປະມານຍິ່ງ ກັບຂຶ້ນໄປເທິງອາກາດ ເທວະດາອົງໜຶ່ງໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ເມື່ອເຮົາຂໍໂທດຢູ່ ຫາກບຸກຄົນໃດບໍ່ຍອມຍົກໂທດໃຫ້
ຍັງມີຄວາມໂກດຢູ່ພາຍໃນ ມີຄວາມແຄ້ນເຄືອງຫຼາຍ
ບຸກຄົນນັ້ນ ຊື່ວ່າຍ່ອມຜູກເວນ

ຫາກວ່າໃນໂລກນີ້ ໂທດບໍ່ມີ ຄວາມຜິດບໍ່ມີ
ແລະເວນທັງຫຼາຍບໍ່ສະງົບ
ບຸກຄົນໃນໂລກນີ້ເພິ່ງເປັນຜູ້ສະຫຼາດໄດ້ແນວໃດ?
ໃຜແດ່ ບໍ່ມີໂທດ ໃຜແດ່ ບໍ່ມີຄວາມຜິດ
ໃຜແດ່ ບໍ່ເຖິງຄວາມຫຼົງໄຫຼ
ໃນໂລກນີ້ ໃຜເປັນຜູ້ມີປັນຍາ ເປັນຜູ້ມີສະຕິຢູ່ທຸກເວລານໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພຣະຕະຖາຄົດພຣະອົງນັ້ນຜູ້ຕັດສະຣູ້ແລ້ວ
ຜູ້ອະນຸເຄາະແກ່ສັດທັງປວງ ບໍ່ມີໂທດ ບໍ່ມີຄວາມຜິດ
ພຣະຕະຖາຄົດພຣະອົງນັ້ນ ບໍ່ເຖິງຄວາມຫຼົງໄຫຼ
ພຣະຕະຖາຄົດພຣະອົງນັ້ນ ເປັນຜູ້ມີປັນຍາ ເປັນຜູ້ມີສະຕິຢູ່ທຸກເວລາ
ເມື່ອພວກທ່ານຂໍໂທດຢູ່ ຫາກບຸກຄົນໃດບໍ່ຍອມຍົກໂທດໃຫ້
ຍັງມີຄວາມໂກດຢູ່ພາຍໃນ ມີຄວາມແຄ້ນເຄືອງຫຼາຍ
ບຸກຄົນນັ້ນ ຊື່ວ່າ ຍ່ອມຜູກເວນ
ເຮົາບໍ່ພໍໃຈເວນນັ້ນ ຈຶ່ງຍົກໂທດໃຫ້ແກ່ທ່ານທັງຫຼາຍ

**ອຸດຊານະສັນຍິສູດທີ ໘ ຈົບ**

# ໙. ສັດທາສູດ

## ວ່າດ້ວຍສັດທາ

[໓໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ພວກເທວະດາສະຕຸນລະປະກາຍິກາຈຳນວນຫຼາຍ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ

ເທວະດາອົງໜຶ່ງ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ສັດທາເປັນເພື່ອນຂອງບຸຣຸດ

ຫາກວ່າຄວາມບໍ່ມີສັດທາບໍ່ຕັ້ງຢູ່
ຍ້ອນເຫດນັ້ນ ຍົດແລະກຽດຍ່ອມມີແກ່ເຂົາ
ອັນໜຶ່ງ ຜູ້ນັ້ນລະຖິ້ມຮ່າງກາຍແລ້ວຍ່ອມໄປສູ່ສະຫວັນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖາເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນຄວນລະຄວາມໂກດ ສະລະມານະ
ກ້າວລ່ວງສັງໂຍດໄດ້ໝົດທຸກຢ່າງ
ຍ້ອນວ່າກິເລດເປັນເຄື່ອງຂ້ອງຍ່ອມບໍ່ສຸມໃສ່ບຸກຄົນນັ້ນ
ຜູ້ບໍ່ຕິດຢູ່ໃນນາມຮູບ ຜູ້ບໍ່ມີກິເລດເຄື່ອງກັງວົນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຄົນພານມີປັນຍາຊາມ
ປະກອບຄວາມຜະໝາດຢູ່ສະເໝີ
ສ່ວນຄົນສະຫຼາດຖືຮັກສາຄວາມບໍ່ຜະໝາດໄວ້
ຄືຄົນຖືຮັກສາຊັບອັນປະເສີດ ສັນນັ້ນ
ທ່ານທັງຫຼາຍຢ່າປະກອບຄວາມຜະໝາດ
ແລະຢ່າປະກອບຄວາມເຊີຍຊົມຍິນດີໃນກາມເລີຍ
ຍ້ອນວ່າຜູ້ບໍ່ຜະໝາດແລ້ວ ເພ່ງພິນິດຢູ່
ຍ່ອມໄດ້ຮັບຄວາມສຸກອັນແທ້ຈິງ

**ສັດທາສູດທີ ໖ ຈົບ**

## ໗. ສະມະຍະສູດ

### ວ່າດ້ວຍພວກເທວະດາປະຊຸມກັນ

[໖໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າມະຫາວັນ ເຂດເມືອງກະບິນລະພັດ ແຄວ້ນສັກກະ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ລ້ວນເປັນພຣະອະຣະຫັນ ແລະມີພວກເທວະດາຈາກໂລກກະທາດທັງສິບປະຊຸມກັນເປັນຈຳນວນຫຼາຍ ເພື່ອຈະເຝົ້າພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງ

ຄັ້ງນັ້ນ ເທວະດາ ໔ ອົງ ທີ່ເກີດໃນໝູ່ພົມຊັ້ນສຸດທາວາດໄດ້ມີຄວາມດຳຣິແນວນີ້ວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນີ້ ປະທັບຢູ່ປ່າມະຫາວັນ ເຂດເມືອງກະບິນລະພັດ ແຄວັ້ນສັກກະ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ລ້ວນເປັນພຣະອະຣະຫັນ ອັນໜຶ່ງ ພວກເທວະດາ ຈາກໂລກກະທາດທັງສິບປະຊຸມກັນເປັນຈຳນວນຫຼາຍ ເພື່ອຈະເຝົ້າພຣະຜູ້ມີພຣະພາກເຈົ້າແລະ ພິກຂຸສົງ ທາງທີ່ດີແມ່ນເຮົາທັງຫຼາຍຄວນເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວກ່າວ ຄາຖາສະເພາະຕົນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ເທວະດາເຫຼົ່ານັ້ນ ຫາຍໂຕໄປຈາກໝູ່ພົມຊັ້ນສຸດທາວາດມາຜາກົດຢູ່ສະເພາະ ພຣະພັກພຣະຜູ້ມີພຣະພາກເຈົ້າ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ ຄັ້ງນັ້ນ ເທວະດາເຫຼົ່ານັ້ນ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວຢືນຢູ່ບ່ອນທີ່ສົມຄວນ

ເທວະດາອົງໜຶ່ງ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີ ພຣະພາກເຈົ້າວ່າ

ການປະຊຸມໃຫຍ່ໄດ້ມີຂຶ້ນແລ້ວໃນປ່າໃຫຍ່
ພວກເທວະດາມາປະຊຸມພ້ອມກັນແລ້ວ
ພວກຂ້າພຣະອົງພາກັນມາສູ່ທີ່ປະຊຸມອັນເປັນທຳນີ້
ເພື່ອຈະຍ້ຽມຍາມໝູ່ພິກຂຸຜູ້ທີ່ໃຜ ໆ ໃຫ້ປຣາໄຊບໍ່ໄດ້

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ໃນບ່ອນປະຊຸມນັ້ນ ພິກຂຸທັງຫຼາຍຕັ້ງຈິດໄວ້ໝັ້ນ
ເຮັດຈິດຕົນເອງໃຫ້ກົງ ພິກຂຸເຫຼົ່ານັ້ນເປັນບັນດິດ
ຍ່ອມຖືຮັກສາອິນຊີທັງຫຼາຍ
ຄືນາຍສາຣະຖີຖືບັງຫຽນມ້າ ບັງຄັບໃຫ້ແລ່ນໄປຕາມທາງ ສັນນັ້ນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ພິກຂຸເຫຼົ່ານັ້ນ ຕັດກິເລດຄືຕະປູຕຶງຈິດ[១]ໄດ້ແລ້ວ
ຕັດກິເລດຄືຫຼິ່ມໄລ[២]ໄດ້ແລ້ວ
ແລະຖອນກິເລດຄືເສົາເຂື່ອນ[៣]ໄດ້ແລ້ວ
ຈຶ່ງບໍ່ຫວັ່ນໄຫວ ເປັນຜູ້ມົດຈິດ ປາສະຈາກມົນທິນ
ມີຈັກຂຸ[៤] ເຝິກຕົນດີແລ້ວ ເປັນຜູ້ປະເສີດ ປະພຶດທຳຢູ່

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ບຸກຄົນທັງຫຼາຍ ຜູ້ເຖິງພຣະພຸດທະເຈົ້າເປັນສະຣະນະ
ຈັກບໍ່ໄປສູ່ອະບາຍພູມ ລະຮ່າງກາຍອັນເປັນຂອງມະນຸດແລ້ວ
ຈັກບັງເກີດເປັນເທວະດາໂດຍສົມບູນ

**ສະມະຍະສູດທີ ໗ ຈົບ**

# ໘. ສະກະລິກະສູດ

## ວ່າດ້ວຍຫີນແຕກ

[໓໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ມັດທະກຸດສີ ສະຖານທີ່ພຣະຣາດຊະທານອະໄພ ແກ່ໝູ່ເນື້ອ ເຂດນະຄອນຣາດຊະຄຶ ສະໄໝນັ້ນຫີນແຕກກະທົບພຣະບາດຂອງຜູ້ມີພຣະພາກເຈົ້າ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າ ຊົງມີທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນແຮງ ຮ້ອນຮົນຫຼາຍ ອັນບໍ່ສະບາຍພຣະທະໄທ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນານັ້ນໄວ້ໄດ້ ບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປູຜ້າສັງຄາຕິ ໔ ຊັ້ນ ຊົງສຳເລັດສີຫະໄສຍາດ (ການນອນຄືຣາດຊະສີ) ໂດຍສະແຄງຂວາ ຊົງຊ້ອນພຣະບາດເຫຼື່ອມພຣະບາດ ມີພຣະສະຕິສຳປະຊັນຍະ

ຄັນເມື່ອຣາຕີຜ່ານໄປ ພວກເທວະດາສະຕຸບລະປະກາຍິກາປະມານ ໗໐໐ ອົງ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວມັດທະກຸດສີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ

ເທວະດາອົງໜຶ່ງ ຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ເປ່ງອຸທານນີ້ໃນສຳນັກຂອງພຣະຜູ້ມີພຣະພາກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະສະມະນະໂຄດົມເປັນບຸຣຸດຄືນາກ°ຈິງ ກໍແລພຣະສະມະນະໂຄດົມມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນແຮງ ຮ້ອນຮົນຫຼາຍ ອັນບໍ່ສະບາຍພຣະທະໄທ ທີ່ເກີດຂຶ້ນແລ້ວໄວ້ໄດ້ ຍ້ອນຄວາມທີ່ພຣະອົງເປັນບຸຣຸດຄືນາກ ບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະສະມະນະໂຄດົມເປັນບຸຣຸດຄືຣາດຊະສີຈິງແທ້ ກໍແລ ພຣະສະມະນະໂຄດົມ ມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນ

ແຮງ ຮ້ອນຮົນຫຼາຍ ອັນບໍ່ສະບາຍພຣະຫະໄທ ທີ່ເກີດຂື້ນແລ້ວໄວ້ໄດ້ ຍ້ອນຄວາມທີ່ພຣະອົງເປັນບຸຣຸດຄືຣາດຊະສີ ບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະສະມະນະໂຄດົມເປັນບຸຣຸດອາຊາໄນຈິງແທ້ ກໍແລ ພຣະສະມະນະໂຄດົມມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນແຮງ ຮ້ອນຮົນຫຼາຍ ອັນບໍ່ສະບາຍພຣະຫະໄທ ທີ່ເກີດຂື້ນແລ້ວໄວ້ໄດ້ ຍ້ອນຄວາມທີ່ພຣະອົງເປັນບຸຣຸດອາຊາໄນບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະສະມະນະໂຄດົມເປັນບຸຣຸດຜູ້ອົງອາດຈິງແທ້ ກໍແລ ພຣະສະມະນະໂຄດົມມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນແຮງ ຮ້ອນຮົນຫຼາຍ ອັນບໍ່ສະບາຍພຣະຫະໄທ ທີ່ເກີດຂື້ນແລ້ວໄວ້ໄດ້ ຍ້ອນຄວາມທີ່ພຣະອົງເປັນບຸຣຸດຜູ້ອົງອາດ ບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະສະມະນະໂຄດົມເປັນບຸຣຸດຜູ້ຝັກໃຝ່ທຸລະຈິງແທ້ ກໍແລພຣະສະມະນະໂຄດົມມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນແຮງ ຮ້ອນຮົນຫຼາຍ ອັນບໍ່ສະບາຍພຣະຫະໄທ ທີ່ເກີດຂື້ນແລ້ວໄວ້ໄດ້ ຍ້ອນຄວາມທີ່ພຣະອົງເປັນບຸຣຸດຜູ້ຝັກໃຝ່ທຸລະ ບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ເທວະດາອີກອົງໜຶ່ງໄດ້ເປ່ງອຸທານນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະສະມະນະໂຄດົມເປັນບຸຣຸດຜູ້ເຝິກແລ້ວຈິງແທ້ ກໍແລ ພຣະສະມະນະໂຄດົມ

ມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນແຮງ ຮ້ອນຮົນຫຼາຍ ອັນບໍ່ສະບາຍພຣະຫະໄທ ທີ່ເກີດຂື້ນແລ້ວໄວ້ໄດ້ ຍ້ອນຄວາມທີ່ພຣະອົງເປັນບຸຣຸດຜູ້ເຝິກແລ້ວ ບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ເທວະດາອີກອົງໜຶ່ງ ໄດ້ເປ່ງອຸທານນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ ທ່ານຈົ່ງເບິ່ງສະມາທິທີ່ພຣະສະມະນະໂຄດົມຊົງຈະເລີນດີແລ້ວ ຈົ່ງເບິ່ງຈິດທີ່ພຣະສະມະນະໂຄດົມຊົງໃຫ້ລຸດພົ້ນດີແລ້ວ໌ ຈິດທີ່ເປັນໄປຕາມຣາຄະພຣະສະມະນະໂຄດົມກໍບໍ່ໃຫ້ນ້ອມໄປເຖິງແລ້ວ ຈິດທີ່ເປັນໄປຕາມໂທສະພຣະສະມະນະໂຄດົມກໍບໍ່ໃຫ້ຫວນກັບມາແລ້ວ ແລະຈິດຂອງພຣະສະມະນະໂຄດົມບໍ່ຕ້ອງຕັ້ງໃຈຂົ່ມແລະຖ້າຫ້າມ ບຸກຄົນໃດເພິ່ງສຳຄັນພຣະສະມະນະໂຄດົມເປັນ

ບຸຣຸດຄືນາກ ເປັນບຸຣຸດຄືຣາດຊະສີ ເປັນບຸຣຸດອາຊາໄນ ເປັນບຸຣຸດຜູ້ອົງອາດ ເປັນບຸຣຸດຜູ້ໃຝ່ທຸລະ ແລະເປັນບຸຣຸດຜູ້ເຝິກແລ້ວປານນີ້ວ່າ ເປັນຜູ້ທີ່ຕົນຈະລ່ວງເກີນໄດ້ ບຸກຄົນນັ້ນ ຈະເປັນອັນໃດນໍ? ນອກເສຍຈາກຜູ້ບໍ່ມີທັດສະນະ

(ເທວະດານັ້ນເມື່ອກ່າວແນວນີ້ແລ້ວ ໄດ້ກ່າວຄາຖາທັງຫຼາຍເຫຼົ່ານີ້ວ່າ)

ພາມທັງຫຼາຍ ຜູ້ຊົງເວທະທັງ ໕ ມີຕະບະ
ປະພຶດທຳຢູ່ຢ່າງສະໝ່ຳສະເໝີຕັ້ງ ໑໐໐ ປີ
ແຕ່ຈິດຂອງພາມເຫຼົ່ານັ້ນ ກໍບໍ່ລຸດພົ້ນໂດຍຖືກຕ້ອງ
ຍ້ອນພາມເຫຼົ່ານັ້ນ ມີສະພາບຈິດຕ່ຳ
ຈຶ່ງບໍ່ເຖິງສິ້ນສຸດ (ແຫ່ງຄວາມຕາຍ)

ພາມເຫຼົ່ານັ້ນ ຖືກຕັນຫາຄອບງຳແລ້ວ
ກ່ຽວຂ້ອງດ້ວຍສີນພົດ ປະພຶດຕະບະອັນເສົ້າໝອງຢູ່ຕັ້ງ ໑໐໐ ປີ
ແຕ່ຈິດຂອງພາມເຫຼົ່ານັ້ນກໍບໍ່ລຸດພົ້ນແລ້ວໂດຍຖືກຕ້ອງ
ຍ້ອນພາມເຫຼົ່ານັ້ນ ມີສະພາບຈິດຕ່ຳ ຈຶ່ງບໍ່ເຖິງຈຸດຈົບ
ບຸກຄົນຜູ້ມີມານະ ຍ່ອມບໍ່ມີການເຝິກຕົນເອງ
ບຸກຄົນຜູ້ມີຈິດບໍ່ໝັ້ນຄົງ ຍ່ອມບໍ່ມີຄວາມຮູ້
ບຸກຄົນຜູ້ຜະໝາດຢູ່ໃນປ່າຄົນດຽວ
ກໍບໍ່ເຖິງສິ້ນສຸດແຫ່ງຄວາມຕາຍ

ບຸກຄົນລະມານະໄດ້ແລ້ວ ມີໃຈໝັ້ນຄົງດີ
ມີໃຈດີ ລຸດພົ້ນໃນທຳທັງປວງ
ເຂົາບໍ່ຜະໝາດຢູ່ໃນປ່າຄົນດຽວ
ກໍເຖິງສິ້ນສຸດແຫ່ງຄວາມຕາຍໄດ້

**ສະກະລິກະສູດທີ ໗ ຈົບ**

# ໘. ປະຖົມປັດຊຸນນະທີຕຸສູດ

## ວ່າດ້ວຍທິດາຂອງທ້າວປັດຊຸນນະ ສູດທີ ໑

[໓໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະ

ຄອນເວສາລີ ຄັນເມື່ອຣາຕີຜ່ານໄປ ທິດາຂອງທ້າວປັດຊຸນນະ ຊື່ໂກກະນະທາ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວປ່າມະຫາວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ຂ້ານ້ອຍ ຊື່ໂກກະນະທາ ເປັນທິດາຂອງທ້າວປັດຊຸນນະ
ຂໍຖວາຍອະພິວາດພຣະສຳມາສຳພຸດທະເຈົ້າຜູ້ເລີດກວ່າສັດ
ຜູ້ສະເດັດຢູ່ໃນປ່າ ໃກ້ນະຄອນເວສາລີ

ຂ້ານ້ອຍໄດ້ຟັງສຸນທອນພົດໃນການກ່ອນວ່າ
ທຳ ພຣະສຳມາສຳພຸດທະເຈົ້າຜູ້ມີພຣະຈັກຂຸຕັດສະຣູ້ແລ້ວໂດຍລຳດັບ
ບັດນີ້ເມື່ອພຣະສຸຄົດຜູ້ເປັນມຸນີ ຊົງສະແດງ (ທຳ) ຢູ່

ຂ້ານ້ອຍຈຶ່ງຮູ້ແຈ້ງ
ຊົນເຫຼົ່າໃດມີປັນຍາຊາມ
ທ່ຽວຕິຕຽນທຳອັນປະເສີດ
ຊົນເຫຼົ່ານັ້ນ ຍ່ອມບັງເກີດໃນນະຣົກຊື່ໂຣຣຸວະອັນທາລຸນ
ສະເຫວີຍທຸກຕະຫຼອດການລະນານ
ຊົນເຫຼົ່າໃດມີຄວາມອົດທົນ
ແລະມີຄວາມສະງົບ ເຂົ້າເຖິງທຳອັນປະເສີດ
ຊົນເຫຼົ່ານັ້ນ ລະຮ່າງກາຍອັນເປັນຂອງມະນຸດແລ້ວ
ຈັກບັງເກີດເປັນເທວະດາໂດຍສົມບູນ

**ປະຖົມປັດຊຸນນະທິຕຸສູດທີ ໗ ຈົບ**

# ໑໐. ທຸຕິຍະປັດຊຸນນະທິຕຸສູດ

## ວ່າດ້ວຍທິດາຂອງທ້າວປັດຊຸນນະ ສູດທີ ໘

[໔໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັນເມື່ອຣາຕີຜ່ານໄປ ທິດາຂອງທ້າວປັດຊຸນນະ ຊື່ ຈູລະໂກກະນະທາ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວປ່າມະຫາວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ

ຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ທິດາຂອງທ້າວປັດຊຸນນະ ຊື່ໂກກະນະທາ
ມີວັນນະສະຫວ່າງຄືສາຍຟ້າ ມາແລ້ວໃນບ່ອນນີ້
ນອບນ້ອມພຣະພຸດທະເຈົ້າແລະພຣະທຳ
ໄດ້ກ່າວຄາຖາເຫຼົ່ານີ້ເຊິ່ງມີປະໂຫຍດ

ຂ້ານ້ອຍເພິ່ງຈຳແນກທຳນັ້ນໂດຍປະຣິຍາຍແມ່ນຫຼາຍ
ທຳແນວນີ້ມີຢູ່ໂດຍປະຣິຍາຍ
ທຳມີປະມານທໍ່ໃດທີ່ຂ້ານ້ອຍສຶກສາແລ້ວດ້ວຍໃຈ

ຂ້ານ້ອຍຈັກກ່າວອັດຖະແຫ່ງທຳປະມານທໍ່ນັ້ນໂດຍຫຍໍ້
ບຸກຄົນບໍ່ຄວນເຮັດກຳຊົ່ວອັນໃດ ໆ
ທາງກາຍ ທາງວາຈາ ຫຼື ທາງໃຈໃນໂລກທັງປວງ
ບຸກຄົນມີສະຕິສຳປະຊັນຍະ ລະກາມທັງຫຼາຍໄດ້ແລ້ວ
ບໍ່ເພິ່ງປະສົບທຸກ ເຊິ່ງປະກອບດ້ວຍສິ່ງທີ່ບໍ່ເປັນປະໂຫຍດ

**ທຸຕິຍະປັດຊຸນນະທິຕຸສູດທີ ໑໐ ຈົບ**

**ສະຕຸນລະປະກາຍິກະວັກທີ ໔ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

# ໕. ອາທິດຕະວັກ

## ໝວດວ່າດ້ວຍສິ່ງທີ່ເປັນຂອງຮ້ອນ

## ໑. ອາທິດຕະສູດ

### ວ່າດ້ວຍສິ່ງທີ່ເປັນຂອງຮ້ອນ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະ ງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ເມື່ອເຮືອນຖືກໄຟໄໝ້ແລ້ວ
ເຈົ້າຂອງເຮືອນຂົນເອົາພາຊະນະໃດອອກໄປໄດ້
ພາຊະນະນັ້ນຍ່ອມເປັນປະໂຫຍດແກ່ເຂົາ
ສ່ວນສິ່ງຂອງທີ່ບໍ່ໄດ້ຂົນອອກໄປຍ່ອມຖືກໄຟໄໝ້ ສັນໃດ
ໂລກຖືກຊະຣາແລະມໍລະນະເຜົາແລ້ວ ກໍສັນນັ້ນ

ຄວນນຳອອກດ້ວຍການໃຫ້ທານ
ຍ້ອນທານທີ່ບຸກຄົນໃຫ້ແລ້ວ ຊື່ວ່ານຳອອກດີແລ້ວ
ທານທີ່ບຸກຄົນໃຫ້ແລ້ວນັ້ນຍ່ອມມີຜົນຄືຄວາມສຸກ
ທີ່ຍັງບໍ່ໄດ້ໃຫ້ ຍ່ອມບໍ່ມີຜົນແນວນັ້ນ
ໂຈນຍັງປຸ້ນເອົາໄປໄດ້ ພຣະຣາຊາຍັງຢຶດເອົາໄປໄດ້
ໄຟຍັງໄໝ້ໄດ້ຫຼືສູນຫາຍໄປໄດ້

ອັນໜຶ່ງ ບຸກຄົນຈະຕ້ອງລະຮ່າງກາຍ
ພ້ອມດ້ວຍສິ່ງຂອງເຄື່ອງອາໄສຍ້ອນການຕາຍຈາກໄປ
ຜູ້ມີປັນຍາຮູ້ແຈ້ງດັ່ງນີ້ແລ້ວ ຄວນໃຊ້ສອຍແລະໃຫ້ທານ
ເມື່ອໃຫ້ທານແລະໃຊ້ສອຍຕາມສົມຄວນແລ້ວຈະບໍ່ຖືກຕິຕຽນ

ຍ່ອມເຂົ້າເຖິງສະຖານທີ່ອັນເປັນແດນສະຫວັນ

**ອາທິດຕະສູດທີ ໑ ຈົບ**

## ໘. ກິນທະທະສູດ

## ວ່າດ້ວຍໃຫ້ອັນໃດ ຊື່ວ່າໃຫ້ອັນໃດ

[໔໘] ເທວະດາທູນຖາມ ວ່າ

ບຸກຄົນໃຫ້ອັນໃດ ຊື່ວ່າໃຫ້ກຳລັງ
ໃຫ້ອັນໃດ ຊື່ວ່າໃຫ້ວັນນະ
ໃຫ້ອັນໃດ ຊື່ວ່າໃຫ້ຄວາມສຸກ
ໃຫ້ອັນໃດ ຊື່ວ່າໃຫ້ຈັກຂຸ
ແລະໃຜ ຊື່ວ່າໃຫ້ທຸກສິ່ງທຸກຢ່າງ

ຂ້າພຣະອົງຂໍທູນຖາມພຣະອົງ
ຂໍພຣະອົງໄດ້ໂຜດຕັດບອກແກ່ຂ້າພຣະອົງດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນໃຫ້ເຂົ້າ ຊື່ວ່າໃຫ້ກຳລັງ
ໃຫ້ຜ້າ ຊື່ວ່າໃຫ້ວັນນະ
ໃຫ້ຍານພາຫະນະ ຊື່ວ່າໃຫ້ຄວາມສະດວກ
ໃຫ້ປະທີບ ຊື່ວ່າໃຫ້ຈັກຂຸ
ແລະຜູ້ໃຫ້ບ່ອນພັກອາໄສ ຊື່ວ່າໃຫ້ທຸກສິ່ງທຸກຢ່າງ
ສ່ວນຜູ້ທີ່ພ່ຳສອນທຳ ຊື່ວ່າໃຫ້ອະມະຕະ

**ກິນທະທະສູດທີ ໘ ຈົບ**

## ໙. ອັນນະສູດ

## ວ່າດ້ວຍເຂົ້າ

[໔໙] ເທວະດາກ່າວ ວ່າ

ເທວະດາແລະມະນຸດທັງສອງພວກ
ຕ່າງກໍພໍໃຈເຂົ້ານຳກັນທັງນັ້ນ
ສ່ວນຜູ້ທີ່ບໍ່ພໍໃຈເຂົ້າ ຊື່ວ່າຍັກໂດຍແທ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊົນເຫຼົ່າໃດມີໃຈເຫຼື້ອມໃສໃຫ້ເຂົ້ານັ້ນດ້ວຍສັດທາ
ເຂົ້ານັ້ນເອງຍ່ອມຄ້ຳຊູຊົນເຫຼົ່ານັ້ນທັງໃນໂລກນີ້ແລະໂລກໜ້າ
ຍ້ອນເຫດນັ້ນ ບຸກຄົນເພິ່ງກຳຈັດຄວາມຂີ້ຖີ່
ຄອບງຳມົນທິນແລ້ວໃຫ້ທານເທີ້ນ
ຍ້ອນບຸນເປັນທີ່ເພິ່ງຂອງສັດທັງຫຼາຍໃນໂລກໜ້າ

**ອັນນະສູດທີ ໓ ຈົບ**

## ໔. ເອກະມູລະສູດ

### ວ່າດ້ວຍບາດານມີຮາກອັນດຽວ

[໔໔] ເທວະດາກ່າວ ວ່າ

ບາດານມີຮາກອັນດຽວ[໑] ມີວົນວຽນ ໒ ຢ່າງ[໒]
ມີມົນທິນ ໓ ປະການ[໓] ມີເຄື່ອງປູລາດ ໕ ປະການ[໔]
ເປັນທະເລໝູນໄປໄດ້ທັງ ໑໒ ດ້ານ[໕]ລືສີຂ້າມພົ້ນໄດ້ແລ້ວ

**ເອກະມູລະສູດທີ ໔ ຈົບ**

## ໕. ອະໂນມິຍະສູດ

### ວ່າດ້ວຍພຣະນາມບໍ່ຕ່ຳຕ້ອຍ

[໔໕] ເທວະດາກ່າວວ່າ

ເຊີນທ່ານທັງຫຼາຍເບິ່ງພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ມີພຣະນາມບໍ່ຕ່ຳຕ້ອຍ[໑] ຊົງເຫັນປະໂຫຍດອັນລະອຽດອ່ອນ
ໃຫ້ເຊິ່ງປັນຍາ ບໍ່ຊົງຂ້ອງຢູ່ໃນອາໄລຄືກາມ

ຕັດສະຣູ້ທຳທຸກຢ່າງ ມີພຣະປັຊາ ດຳເນີນໄປໃນທາງອັນປະເສີດ
ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

**ອະໂນມິຍະສູດທີ ໕ ຈົບ**

# ໖. ອັດສະຣາສູດ

## ວ່າດ້ວຍນາງອັບປະສອນ

[໔໖] ເທວະດາທູນຖາມ ວ່າ

ແຄມປ່າໜ້າຫຼົງໄຫຼ ກຶກກ້ອງໄປດ້ວຍໝູ່ນາງອັບປະສອນ
ເປັນປ່າທີ່ໝູ່ຜີສາດອາໄສຢູ່ ຈັກອອກໄປໄດ້ແນວໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ທາງນັ້ນຊື່ວ່າເປັນທາງກົງ ທິດນັ້ນຊື່ວ່າບໍ່ມີໄພ
ລົດຊື່ວ່າບໍ່ມີສຽງດັງ ປະກອບດ້ວຍລໍ້ຄືທຳ
ຫິຣິເປັນຝາຫຼັງຄາຂອງລົດນັ້ນ ສະຕິເປັນເກາະກັ້ນຂອງລົດນັ້ນ
ເຮົາກ່າວທຳ ມີສຳມາທິດຖິນຳໜ້າວ່າເປັນນາຍສາຣະຖີ
ຍານຊະນິດນີ້ມີຢູ່ແກ່ຜູ້ໃດ ຈະເປັນສະຕີຫຼືບຸຣຸດກໍຕາມ
ຜູ້ນັ້ນໄປໃກ້ນິບພານດ້ວຍຍານນີ້ແລ

**ອັດສະຣາສູດທີ ໖ ຈົບ**

# ໗. ວະນະໂຣປະສູດ

## ວ່າດ້ວຍການປູກປ່າ

[໔໗] ເທວະດາທູນຖາມ ວ່າ

ບຸນຍ່ອມຈະເລີນ ທັງກາງເວັນແລະກາງຄືນ
ຢູ່ຕະຫຼອດເວລາ ແກ່ຊົນເຫຼົ່າໃດ
ຊົນເຫຼົ່າໃດດຳລົງຢູ່ໃນທຳ
ສົມບູນດ້ວຍສີນແລ້ວ ຍ່ອມໄປສູ່ສະຫວັນ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຊົນເຫຼົ່າໃດປູກສວນອັນໜ້າອອນຊອນ໑
ປູກປ່າ ສ້າງຂົວ ຂຸດສະນ້ຳ ນ້ຳສ້າງ
ແລະໃຫ້ບ່ອນພັກອາໄສ
ບຸນຍ່ອມຈະເລີນແກ່ຊົນເຫຼົ່ານັ້ນ
ທັງກາງເວັນແລະກາງຄືນຢູ່ຕະຫຼອດເວລາ
ຊົນເຫຼົ່ານັ້ນດຳລົງຢູ່ໃນທຳ ສົມບູນດ້ວຍສີນແລ້ວ
ຍ່ອມໄປສູ່ສະຫວັນຢ່າງແນ່ນອນ

**ວະນະໂຣປະສູດທີ ໗ ຈົບ**

## ໘. ເຊຕະວະນະສູດ

### ວ່າດ້ວຍພຣະເຊຕະວັນວິຫານ

[໔໘] ອະນາຖະບິນດິກະເທບພະບຸດໄດ້ກ່າວຄາຖາເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພຣະເຊຕະວັນນີ້ນັ້ນມີໝູ່ລືສີອາໄສຢູ່
ພຣະຜູ້ເປັນທຳມະຣາຊາກໍປະທັບຢູ່
ເປັນສະຖານທີ່ໃຫ້ເກີດປີຕິແກ່ຂ້າພຣະອົງ
ການງານ ໑ ວິດຊາ ໑ ທຳ ໑ ສີນ ໑ ຊີວິດອັນສູງສຸດ ໑
ສັດທັງຫຼາຍຍ່ອມບໍລິສຸດດ້ວຍທຳ ໕ ປະການນີ້
ບໍ່ແມ່ນບໍລິສຸດດ້ວຍໂຄດຫຼືດ້ວຍຊັບ

ຍ້ອນເຫດນັ້ນແລ ຄົນສະຫຼາດເມື່ອເຫັນປະໂຫຍດຕົນ
ຄວນຄັດເລືອກທຳໂດຍແຍບຄາຍ
ຍ້ອນເມື່ອຄັດເລືອກແລ້ວ ຍ່ອມມົດຈິດໄດ້ໃນທຳເຫຼົ່ານັ້ນ
ພຣະສາຣີບຸດທີ່ນັ້ນເປັນຜູ້ປະເສີດກວ່າພິກຂຸຜູ້ເຖິງຝັ່ງ
ດ້ວຍປັນຍາ ສີນ ແລະຄວາມສະງົບ໒

**ເຊຕະວະນະສູດທີ ໘ ຈົບ**

# ໗. ມັດສະຣີສູດ
## ວ່າດ້ວຍຄົນຂີ້ຖີ່

[໔໗] ເທວະດາທູນຖາມ ວ່າ

ຄົນເຫຼົ່າໃດໃນໂລກນີ້ ເປັນຄົນຂີ້ຖີ່ໜຽວແໜ້ນ
ຕຳໜິຜູ້ອື່ນ ເຮັດອັນຕະລາຍແກ່ຄົນເຫຼົ່າອື່ນຜູ້ໃຫ້ຢູ່
ວິບາກຂອງຄົນເຫຼົ່ານັ້ນຈະເປັນແນວໃດ?
ແລະພົບໜ້າຈະເປັນແນວໃດ?
ຂ້າພຣະອົງມາເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າ
ວ່າຈະຮູ້ຂໍ້ຄວາມນັ້ນໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຄົນເຫຼົ່າໃດໃນໂລກນີ້ ເປັນຄົນຂີ້ຖີ່ໜຽວແໜ້ນ
ຕຳໜິຜູ້ອື່ນ ເຮັດອັນຕະລາຍແກ່ຄົນເຫຼົ່າອື່ນຜູ້ໃຫ້ຢູ່
ຄົນເຫຼົ່ານັ້ນຍ່ອມບັງເກີດໃນນະຣົກ ກຳເນີດສັດເດຍຣັດສານ ຫຼື ຍົມມະໂລກ
ຖ້າພວກເຂົາມາເກີດເປັນມະນຸດ ກໍເກີດໃນຕະກູນຄົນຍາກຈົນ
ເຊິ່ງຈະຫາຜືນຜ້າ ອາຫານ ຄວາມຍິນດີ ແລະຄວາມສະໜຸກສະໜານໄດ້ຍາກ
ຄົນພານເຫຼົ່ານັ້ນ ຕ້ອງການສິ່ງໃດຈາກຜູ້ອື່ນ
ພວກເຂົາຍ່ອມບໍ່ໄດ້ແມ່ນສິ່ງນັ້ນ
ນັ້ນເປັນວິບາກໃນພົບນີ້ ແລະພົບໜ້າກໍຍັງເປັນທຸກຄະຕິອີກດ້ວຍ

ເທວະດາທູນຖາມ ວ່າ

ຂໍ້ນີ້ຂ້າພຣະອົງເຂົ້າໃຈແນວນີ້
ຂ້າແດ່ ພຣະໂຄດົມ ຂ້າພຣະອົງຂໍທູນຖາມຂໍ້ອື່ນ
ຄົນເຫຼົ່າໃດໃນໂລກນີ້ ໄດ້ຄວາມເປັນມະນຸດແລ້ວ
ຮູ້ເຈລະຈາປາໄສ ປາສະຈາກຄວາມຂີ້ຖີ່
ເຫຼື້ອມໃສໃນພຣະພຸດທະເຈົ້າ ພຣະທຳແລະພຣະສົງ
ເປັນຜູ້ມີຄວາມເຄົາລົບຢ່າງແຮງກ້າ
ວິບາກຂອງຄົນເຫຼົ່ານັ້ນຈະເປັນແນວໃດ? ແລະພົບໜ້າຈະເປັນແນວໃດ?
ຂ້າພຣະອົງມາເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າ

ວ່າຈະຮູ້ຂໍ້ຄວາມນັ້ນໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຄົນເຫຼົ່າໃດໃນໂລກນີ້ ໄດ້ຄວາມເປັນມະນຸດແລ້ວ
ຮູ້ເຈລະຈາປາໄສ ປາສະຈາກຄວາມຂີ້ຖີ່
ເຫຼື້ອມໃສໃນພຣະພຸດທະເຈົ້າ ພຣະທຳແລະພຣະສົງ
ເປັນຜູ້ມີຄວາມເຄົາລົບຢ່າງແຮງກ້າ
ຄົນເຫຼົ່ານັ້ນຍ່ອມຜາກົດໃນສະຫວັນເຊິ່ງເປັນທີ່ອຸບັດຂອງພວກເຂົາ
ຖ້າພວກເຂົາມາເກີດເປັນມະນຸດ ກໍເກີດໃນຕະກູນທີ່ຮັ່ງມີ
ເຊິ່ງຈະຫາຜືນຜ້າ ອາຫານ ຄວາມຍິນດີ ແລະຄວາມສະໜຸກສະໜານໄດ້ບໍ່ຍາກ
ບັນເທີງໃຈຢູ່ໃນໂພຄະຊັບທີ່ຜູ້ອື່ນຫາສະສົມໄວ້
ຄືເທວະດາຊັ້ນປະຣະນິມມິຕະວະສະວັດດີ
ນັ້ນເປັນວິບາກໃນພົບນີ້ ທັງພົບໜ້າກໍເປັນສຸກຄະຕິອີກດ້ວຍ

**ມັດສະຣິສູດທີ ໗ ຈົບ**

# ໑໐. ຄະຕິກາຣະສູດ

## ວ່າດ້ວຍຄະຕິກາຣະເທບພະບຸດ

[໕໐] ຄະຕິກາຣະເທບພະບຸດຂາບທູນ ວ່າ

ພິກຂຸ ໗ ອົງ ຜູ້ບັງເກີດໃນພົມມະໂລກຊັ້ນອະວິຫາ
ເປັນຜູ້ລຸດພົ້ນ ສິ້ນຣາຄະແລະໂທສະແລ້ວ
ຂ້າມພົ້ນຕັນຫາທີ່ແຜ່ໄປໃນໂລກໄດ້

ພຣະຜູ້ມີພຣະພາກເຈົ້າຕັດຖາມ ວ່າ

ພິກຂຸເຫຼົ່ານັ້ນມີໃຜແດ່?
ໄດ້ຂ້າມພົ້ນເປືອກຕົມ ຄືບ້ວງຄວາມຕາຍ
ທີ່ໃຜ ໆ ຂ້າມໄດ້ແສນຍາກ
ລະຖິ້ມກາຍມະນຸດ[໑]ແລ້ວກ້າວລ່ວງໂຍຄະອັນເປັນທິບ[໒]ໄດ້

ຄະຕິກາຣະເທບພະບຸດທູນຕອບ ວ່າ

ພິກຂຸ ໓ ອົງເຫຼົ່ານີ້ ຄື ທ່ານອຸປະກະ
ທ່ານຜະລະຄັນດະ ແລະ ທ່ານປຸກກຸສາຕິ
ພິກຂຸອີກ ໔ ອົງ ຄື ທ່ານພັດທິຍະ ທ່ານຂັນທະເທວະ
ທ່ານພະຫຸທັນຕິ ແລະ ທ່ານສິງຄິຍະ
ພິກຂຸເຫຼົ່ານັ້ນ ລະຖິ້ມກາຍມະນຸດແລ້ວ
ກ້າວລ່ວງໂຍຄະອັນເປັນທິບໄດ້

ພຣະຜູ້ມີພຣະພາກເຈົ້າຕັດຖາມ ວ່າ

ທ່ານຜູ້ສະຫຼາດມັກກ່າວສັນເສີນພິກຂຸເຫຼົ່ານັ້ນ
ຜູ້ລະບ້ວງແຫ່ງມານໄດ້ແລ້ວ
ພິກຂຸເຫຼົ່ານັ້ນ ຮູ້ທຳຂອງໃຜນໍ?
ຈຶ່ງຕັດເຄື່ອງມັດຄືພົບໄດ້

ຄະຕິກາຣະເທບພະບຸດທູນຕອບ ວ່າ

ທ່ານເຫຼົ່ານັ້ນ ຮູ້ທຳຂອງຜູ້ໃດ
ຈຶ່ງຕັດເຄື່ອງມັດຄືພົບໄດ້
ຜູ້ນັ້ນບໍ່ແມ່ນຄົນອື່ນນອກຈາກພຣະຜູ້ມີພຣະພາກເຈົ້າ
(ແລະ) ນອກຈາກຄຳສັ່ງສອນຂອງພຣະອົງ
ທ່ານເຫຼົ່ານັ້ນ ຮູ້ທຳເປັນທີ່ດັບບໍ່ເຫຼືອ
ແຫ່ງນາມຮູບແລ້ວ ຈຶ່ງຕັດເຄື່ອງມັດຄືພົບໄດ້

ພຣະຜູ້ມີພຣະພາກເຈົ້າຕັດຖາມ ວ່າ

ທ່ານກ່າວວາຈາເລິກເຊິ່ງ
ທີ່ຮູ້ໄດ້ຍາກ ເຂົ້າໃຈໃຫ້ດີໄດ້ຍາກ
ທ່ານຮູ້ທຳຂອງໃຜ ຈຶ່ງກ່າວວາຈາແນວນີ້ໄດ້

ຄະຕິກາຣະເທບພະບຸດທູນຕອບ ວ່າ

ແຕ່ກ່ອນຂ້າພຣະອົງເປັນຊ່າງໝໍ້
ປັ້ນໝໍ້ຢູ່ໃນແຄວັ້ນເວພະລິງຄະ ເປັນຜູ້ລ້ຽງເບິ່ງມານດາແລະບິດາ
ເປັນອຸປາສົກຂອງພຣະກັດສະປະພຸດທະເຈົ້າ ເວັ້ນຂາດຈາກເມຖຸນທຳ
ປະພຶດພົມມະຈັນ ບໍ່ມີອາມິດ

ໄດ້ເຄີຍເປັນຄົນໃນໝູ່ບ້ານດຽວກັນກັບພຣະອົງ
ທັງເຄີຍເປັນສະຫາຍຂອງພຣະອົງໃນການກ່ອນ
ຂ້າພຣະອົງຮູ້ຈັກພິກຂຸ ໆ ອົງເຫຼົ່ານີ້
ຜູ້ລຸດພົ້ນແລ້ວ ສິ້ນຣາຄະແລະໂທສະແລ້ວ
ຂ້າມພົ້ນຕັນຫາທີ່ແຜ່ໄປໃນໂລກໄດ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ນາຍຊ່າງໝໍ້ ຈິງຄືທີ່ທ່ານເວົ້ານັ້ນແລ
ແຕ່ກ່ອນນັ້ນທ່ານເຄີຍເປັນຊ່າງໝໍ້
ປັ້ນໝໍ້ຢູ່ໃນແຄວັນເວພະລິງຄະ ເປັນຜູ້ລ້ຽງເບິ່ງມານດາແລະບິດາ
ເປັນອຸປາສົກຂອງພຣະກັດສະປະພຸດທະເຈົ້າ ເວັ້ນຂາດຈາກເມຖຸນທຳ
ປະພຶດພົມມະຈັນ ບໍ່ມີອາມິດ
ໄດ້ເຄີຍເປັນຄົນໃນໝູ່ບ້ານດຽວກັນກັບເຮົາ
ທັງເຄີຍເປັນສະຫາຍຂອງເຮົາໃນການກ່ອນ

ພຣະສັງຄີຕິກາຈານກ່າວ ວ່າ

ສະຫາຍເກົ່າທັງສອງ ຜູ້ເຄີຍອົບຮົມຕົນມາແລ້ວ
ເຫຼືອໄວ້ແຕ່ຮ່າງກາຍໃນຊາດສຸດທ້າຍ
ໄດ້ມາພົບກັນດ້ວຍອາການແນວນີ້ໆ

**ຄະຕິກາຣະສູດທີ ໑໐ ຈົບ**

**ອາທິດຕະວັກທີ ໕ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

| | |
|---|---|
| ໑. ອາທິດຕະສູດ | ໒. ກົນທະທະສູດ |
| ໓. ອັນນະສູດ | ໔. ເອກະມູລະສູດ |
| ໕. ອະໂນມິຍະສູດ | ໖. ອັດສະຣາສູດ |
| ໗. ວະນະໂຣປະສູດ | ໘. ເຊຕະວະນະສູດ |
| ໙. ມັດສະຣີສູດ | ໑໐. ຄະຕິກາຣະສູດ |

# ໖. ຊະຣາວັກ

## ໝວດວ່າດ້ວຍຊະຣາ

## ໑. ຊະຣາສູດ

### ວ່າດ້ວຍຊະຣາ

[໕໑] ເທວະດາທູນຖາມ ວ່າ

ອັນ ໃດນໍ? ຍັງປະໂຫຍດໃຫ້ສຳເລັດຕາບທໍ່ຊະຣາ (ຄວາມແກ່)
ອັນໃດນໍ? ຕັ້ງໝັ້ນແລ້ວຍັງປະໂຫຍດໃຫ້ສຳເລັດ
ອັນໃດນໍ? ເປັນຣັດຕະນະຂອງຄົນທັງຫຼາຍ
ອັນໃດນໍ? ໂຈນລັກໄປບໍ່ໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ສີນຍັງປະໂຫຍດໃຫ້ສຳເລັດຕາບທໍ່ຊະຣາ
ສັດທາຕັ້ງໝັ້ນແລ້ວຍັງປະໂຫຍດໃຫ້ສຳເລັດ
ປັນຍາເປັນຣັດຕະນະຂອງຄົນທັງຫຼາຍ
ບຸນໂຈນລັກໄປບໍ່ໄດ້

**ຊະຣາສູດທີ ໑ ຈົບ**

## ໘. ອະຊະຣະສາສູດ

### ວ່າດ້ວຍສິ່ງທີ່ບໍ່ເປ່ເພ

[໕໘] ເທວະດາທູນຖາມວ່າ

ອັນ ໃດນໍ? ທີ່ບໍ່ເປ່ເພ^ຍັງປະໂຫຍດໃຫ້ສຳເລັດ
ອັນໃດນໍ? ຕັ້ງໝັ້ນແລ້ວຍັງປະໂຫຍດໃຫ້ສຳເລັດ
ອັນໃດນໍ? ເປັນຣັດຕະນະຂອງຄົນທັງຫຼາຍ
ອັນ ໃດນໍ? ໂຈນລັກໄປບໍ່ໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ສິນທີ່ບໍ່ເປ່ເພຍັງປະໂຫຍດໃຫ້ສຳເລັດ
ສັດທາຕັ້ງໝັ້ນແລ້ວຍັງປະໂຫຍດໃຫ້ສຳເລັດ
ປັນຍາເປັນຣັດຕະນະຂອງຄົນທັງຫຼາຍ
ບຸນໂຈນລັກໄປບໍ່ໄດ້

**ອະຊະຣະສາສູດທີ ໘ ຈົບ**

# ໙. ມິດຕະສູດ

## ວ່າດ້ວຍມິດ

[໕໙] ເທວະດາທູນຖາມ ວ່າ

ອັນໃດນໍ? ເປັນມິດຂອງຄົນເດີນທາງ
ອັນ ໃດນໍ? ເປັນມິດໃນເຮືອນຂອງຕົນ
ອັນ ໃດນໍ? ເປັນມິດຂອງຄົນຜູ້ມີປະໂຫຍດ°ເກີດຂຶ້ນ
ອັນ ໃດນໍ? ເປັນມິດຕິດຕາມຕົນໄປເຖິງພົບໜ້າ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ພວກໝູ່ກວຽນເປັນມິດຂອງຄົນເດີນທາງ
ມານດາເປັນມິດໃນເຮືອນຂອງຕົນ
ສະຫາຍເປັນມິດຂອງຄົນຜູ້ມີປະໂຫຍດເກີດຂຶ້ນເລື້ອຍໆ
ບຸນທີ່ຕົນເອງເຮັດໄວ້ແລ້ວເປັນມິດຕິດຕາມຕົນໄປເຖິງພົບໜ້າ

**ມິດຕະສູດທີ ໙ ຈົບ**

# ໑໐. ວັດຖຸສູດ

## ວ່າດ້ວຍບ່ອນເພິ່ງ

[໖໐] ເທວະດາທູນຖາມ ວ່າ

ອັນ ໃດນໍ? ເປັນບ່ອນເພິ່ງຂອງມະນຸດທັງຫຼາຍ
ອັນໃດນໍ? ເປັນເພື່ອນຍອດຍິ່ງໃນໂລກນີ້
ໝູ່ສັດທີ່ມີຊີວິດຢູ່ເທິງພື້ນດິນອາໄສອັນ ໃດນໍ? ລ້ຽງຊີບ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸດເປັນທີ່ເພິ່ງຂອງມະນຸດທັງຫຼາຍ
ພັນລະຍາເປັນເພື່ອນຢູ່ຍອດຢ້ຽມໃນໂລກນີ້
ໝູ່ສັດທີ່ມີຊີວິດຢູ່ເທິງພື້ນດິນອາໄສຝົນລ້ຽງຊີບ

**ວັດຖຸສູດທີ ໔ ຈົບ**

# ໕. ປະຖົມຊະນະສູດ

## ວ່າດ້ວຍສິ່ງທີ່ເຮັດຄົນໃຫ້ເກີດ ສູດທີ ໑

[໕໕] ເທວະດາທູນຖາມ ວ່າ

ອັນ ໃດນໍ? ເຮັດຄົນໃຫ້ເກີດ
ອັນໃດນໍ? ຂອງຄົນນັ້ນຍ່ອມທ່ຽວໄປ
ອັນໃດນໍ? ວຽນວ່າຍໃນສົງສານ
ອັນ ໃດນໍ? ເປັນໄພໃຫຍ່ຂອງຄົນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຕັນຫາເຮັດຄົນໃຫ້ເກີດ
ຈິດຂອງຄົນນັ້ນຍ່ອມແຜ່ໄປ
ສັດວຽນວ່າຍໃນສົງສານ
ທຸກເປັນໄພໃຫຍ່ຂອງຄົນນັ້ນ

**ປະຖົມຊະນະສູດທີ ໕ ຈົບ**

# ໖. ທຸຕິຍະຊະນະສູດ

## ວ່າດ້ວຍສິ່ງທີ່ເຮັດຄົນໃຫ້ເກີດ ສູດທີ ໒

[໕໖] ເທວະດາທູນຖາມ ວ່າ

ອັນໃດນໍ? ເຮັດຄົນໃຫ້ເກີດ
ອັນໃດນໍ? ຂອງຄົນນັ້ນຍ່ອມທ່ຽວໄປ

ອັນ ໃດນໍ? ວຽນວ່າຍໃນສົງສານ
ສັດຍ່ອມບໍ່ລຸດພົ້ນຈາກອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຕັນຫາເຮັດຄົນໃຫ້ເກີດ
ຈິດຂອງຄົນນັ້ນຍ່ອມທ່ຽວໄປ
ສັດວຽນວ່າຍໃນສົງສານ
ສັດຍ່ອມບໍ່ລຸດພົ້ນຈາກທຸກ

**ທຸຕິຍະຊະນະສູດທີ ໖ ຈົບ**

## ໗. ຕະຕິຍະຊະນະສູດ

### ວ່າດ້ວຍສິ່ງທີ່ເຮັດຄົນໃຫ້ເກີດ ສູດທີ ໓

[໕໗] ເທວະດາທູນຖາມ ວ່າ

ອັນ ໃດນໍ? ເຮັດຄົນໃຫ້ເກີດ
ອັນ ໃດນໍ? ຂອງຄົນນັ້ນຍ່ອມທ່ຽວໄປ
ອັນ ໃດນໍ? ວຽນວ່າຍໃນສົງສານ
ອັນ ໃດນໍ? ເປັນທີ່ໄປໃນເບື້ອງໜ້າຂອງຄົນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຕັນຫາເຮັດຄົນໃຫ້ເກີດ
ຈິດຂອງຄົນນັ້ນຍ່ອມທ່ຽວໄປ
ສັດວຽນວ່າຍໃນສົງສານ
ກຳເປັນທີ່ໄປໃນເບື້ອງໜ້າຂອງຄົນນັ້ນ

**ຕະຕິຍະຊະນະສູດທີ ໗ ຈົບ**

# ໗. ອຸປະປະຖະສູດ

## ວ່າດ້ວຍທາງຜິດ

[໕໗] ເທວະດາທູນຖາມ ວ່າ

ອັນ ໃດນໍ? ບັນດິດກ່າວວ່າ ເປັນທາງຜິດ
ອັນ ໃດນໍ? ໝົດໄປຕາມຄືນແລະວັນ
ອັນໃດນໍ? ເປັນມົນທິນຂອງພົມມະຈັນ
ອັນ ໃດນໍ? ບໍ່ແມ່ນນ້ຳ ແຕ່ເປັນເຄື່ອງຊຳຣະລ້າງ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຣາຄະບັນດິດກ່າວວ່າ ເປັນທາງຜິດ
ອາຍຸໝົດໄປຕາມຄືນແລະວັນ
ຍິງເປັນມົນທິນຂອງພົມມະຈັນ ໝູ່ສັດນີ້ຂ້ອງຢູ່ໃນຍິງນັ້ນ
ຕະບະແລະພົມມະຈັນນັ້ນບໍ່ແມ່ນນ້ຳ ແຕ່ເປັນເຄື່ອງຊຳຣະລ້າງ

**ອຸປະປະຖະສູດທີ ໗ ຈົບ**

# ໘. ທຸຕິຍະສູດ

## ວ່າດ້ວຍເພື່ອນ

[໕໘] ເທວະດາທູນຖາມ ວ່າ

ອັນໃດນໍ? ເປັນເພື່ອນຂອງບຸຣຸດ
ອັນໃດນໍ? ຍ່ອມປົກຄອງບຸຣຸດນັ້ນ
ແລະສັດຍິນດີໃນອັນໃດ ຈຶ່ງພົ້ນຈາກທຸກທັງປວງໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ສັດທາເປັນເພື່ອນຂອງບຸຣຸດ
ປັນຍາຍ່ອມປົກຄອງບຸຣຸດນັ້ນ
ສັດຍິນດີໃນນິບພານ ຈຶ່ງພົ້ນຈາກທຸກທັງປວງໄດ້

**ທຸຕິຍະສູດທີ ໘ ຈົບ**

# ໑໐. ກະວິສູດ

## ວ່າດ້ວຍກະວິ

[໖໐] ເທວະດາທູນຖາມ ວ່າ

ອັນໃດນໍ? ເປັນຕົ້ນເຫດຂອງຄາຖາ
ອັນໃດນໍ? ເປັນເຄື່ອງຜາກົດຂອງຄາຖາເຫຼົ່ານັ້ນ
ຄາຖາອາໄສອັນ ໃດນໍ? ອັນໃດນໍ? ເປັນບ່ອນອາໄສຂອງຄາຖາ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ເຮົາເປັນຕົ້ນເຫດຂອງຄາຖາ
ອັກຂະຣະເປັນເຄື່ອງຜາກົດຂອງຄາຖາເຫຼົ່ານັ້ນ
ຄາຖາອາໄສຊື່ ກະວິເປັນບ່ອນອາໄສຂອງຄາຖາ

**ກະວິສູດທີ ໑໐ ຈົບ**

**ຊະຣາວັກທີ ໖ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

# ໗. ອັດທະວັກ

## ໝວດວ່າດ້ວຍສິ່ງຄອບງຳ

## ໑. ນາມະສູດ

### ວ່າດ້ວຍຊື່

[໗໑] ເທວະດາທູນຖາມ ວ່າ

ອັນໃດນໍ? ຄອບງຳສິ່ງທັງປວງ
ອັນໃດນໍ? ບໍ່ມີສິ່ງທັງປວງຍິ່ງກວ່າ
ອັນໃດນໍ? ເປັນທຳແນວໜຶ່ງທີ່ສິ່ງທັງປວງຕົກຢູ່ໃນອຳນາດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຊື່ຄອບງຳສິ່ງທັງປວງ
ຊື່ບໍ່ມີສິ່ງທັງປວງຍິ່ງກວ່າ
ຊື່ເປັນທຳແນວໜຶ່ງທີ່ສິ່ງທັງປວງຕົກຢູ່ໃນອຳນາດ

**ນາມະສູດທີ ໑ ຈົບ**

## ໘. ຈິດຕະສູດ

### ວ່າດ້ວຍຈິດ

[໗໘] ເທວະດາທູນຖາມ ວ່າ

ໂລກ³ຖືກອັນໃດ? ນຳໄປ ຖືກອັນໃດ? ໄລ່ຕ້ອນໄປ
ອັນໃດນໍ? ເປັນທຳແນວໜຶ່ງທີ່ໂລກທັງໝົດຕົກຢູ່ໃນອຳນາດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກຖືກຈິດນຳໄປ ຖືກຈິດໄລ່ຕ້ອນໄປ
ຈິດເປັນທຳແນວໜຶ່ງທີ່ໂລກທັງໝົດຕົກຢູ່ໃນອຳນາດ

**ຈິດຕະສູດທີ ໘ ຈົບ**

# ໓. ຕັນຫາສູດ

## ວ່າດ້ວຍຕັນຫາ

[໖໓] ເທວະດາທູນຖາມ ວ່າ

ໂລກຖືກອັນໃດ? ນໍາໄປ ຖືກອັນໃດ? ໄລ່ຕ້ອນໄປ
ອັນໃດນໍ? ເປັນທໍາແນວໜຶ່ງທີ່ໂລກທັງໝົດຕົກຢູ່ໃນອໍານາດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກຖືກຕັນຫານໍາໄປ ຖືກຕັນຫາໄລ່ຕ້ອນໄປ
ຕັນຫາເປັນທໍາແນວໜຶ່ງທີ່ໂລກທັງໝົດຕົກຢູ່ໃນອໍານາດ

**ຕັນຫາສູດທີ ໓ ຈົບ**

# ໔. ສັນໂຍຊະນະສູດ

## ວ່າດ້ວຍເຄື່ອງປະກອບໄວ້

[໖໔] ເທວະດາທູນຖາມ ວ່າ

ໂລກມີອັນໃດນໍ? ເປັນເຄື່ອງປະກອບໄວ້
ອັນໃດນໍ? ເປັນເຫດທ່ຽວໄປຂອງໂລກນັ້ນ
ຍ້ອນລະອັນໃດໄດ້ນໍ? ພຣະອົງຈຶ່ງຕັດວ່າ ນິບພານ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກມີຄວາມເພີດເພີນເປັນເຄື່ອງປະກອບໄວ້
ວິຕົກເປັນເຫດທ່ຽວໄປຂອງໂລກນັ້ນ
ຍ້ອນລະຕັນຫາໄດ້ ເຮົາຈຶ່ງກ່າວວ່າ ນິບພານ

**ສັນໂຍຊະນະສູດທີ ໔ ຈົບ**

# ໕. ພັນທະນະສູດ

## ວ່າດ້ວຍເຄື່ອງມັດ

[໗໕] ເທວະດາທູນຖາມວ່າ

ໂລກມີອັນ ໃດນໍ? ເປັນເຄື່ອງມັດໄວ້
ອັນໃດນໍ? ເປັນເຫດທ່ຽວໄປຂອງໂລກນັ້ນ
ຍ້ອນລະອັນໃດໄດ້ນໍ ຈຶ່ງຕັດເຄື່ອງມັດໄດ້ໝົດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກມີຄວາມເພີດເພີນເປັນເຄື່ອງມັດໄວ້
ວິຕົກເປັນເຫດທ່ຽວໄປຂອງໂລກນັ້ນ
ຍ້ອນລະຕັນຫາໄດ້ ຈຶ່ງຕັດເຄື່ອງມັດໄດ້ໝົດ

**ພັນທະນະສູດທີ ໕ ຈົບ**

# ໖. ອັບພາຫະຕະສູດ

## ວ່າດ້ວຍສິ່ງທີ່ຖືກກຳຈັດ

[໗໖] ເທວະດາທູນຖາມ ວ່າ

ໂລກຖືກອັນໃດນໍ? ກຳຈັດ ຖືກອັນໃດນໍ? ລ້ອມໄວ້
ຖືກລູກສອນຄືອັນໃດນໍ? ສຽບໄວ້
ຖືກອັນໃດນໍ? ເຜົາໃຫ້ຮ້ອນຢູ່ຕະຫຼອດເວລາ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກຖືກມັດຈຸກຳຈັດ ຖືກຊະຣາລ້ອມໄວ້
ຖືກລູກສອນຄືຕັນຫາສຽບໄວ້
ຖືກຄວາມຢາກເຜົາໃຫ້ຮ້ອນຢູ່ຕະຫຼອດເວລາ

**ອັບພາຫະຕະສູດທີ ໖ ຈົບ**

# ໗. ອຸດທິຕະສູດ

## ວ່າດ້ວຍສິ່ງທີ່ຖືກດັກ

[໗໗] ເທວະດາທູນຖາມ ວ່າ

ໂລກຖືກອັນໃດນໍ? ດັກໄວ້ ຖືກອັນໃດນໍ? ລ້ອມໄວ້
ຖືກອັນໃດນໍ? ອັດໄວ້ ຕັ້ງຢູ່ໃນອັນໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກຖືກຕັນຫາດັກໄວ້ ຖືກຊະຣາລ້ອມໄວ້
ຖືກມັດຈຸອັດໄວ້ ຕັ້ງຢູ່ໃນຄວາມທຸກ

**ອຸດທິຕະສູດທີ ໗ ຈົບ**

# ໘. ປິຫິຕະສູດ

## ວ່າດ້ວຍສິ່ງທີ່ຖືກອັດໄວ້

[໗໘] ເທວະດາທູນຖາມ ວ່າ

ໂລກຖືກອັນໃດນໍ? ອັດໄວ້ ຕັ້ງຢູ່ໃນອັນໃດນໍ?
ຖືກອັນໃດນໍ? ດັກໄວ້ ຖືກອັນໃດນໍ? ລ້ອມໄວ້

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກຖືກມັດຈຸອັດໄວ້ ຕັ້ງຢູ່ໃນຄວາມທຸກ
ຖືກຕັນຫາດັກໄວ້ ຖືກຊະຣາລ້ອມໄວ້

**ປິຫິຕະສູດທີ ໘ ຈົບ**

# ໙. ອິດສາສູດ

## ວ່າດ້ວຍຄວາມຢາກ

[໗໙] ເທວະດາທູນຖາມ ວ່າ

ໂລກຖືກອັນໃດນໍ? ມັດໄວ້
ຍ້ອນກຳຈັດອັນໃດນໍ? ອອກໄປ ຈຶ່ງພົ້ນໄດ້
ຍ້ອນລະອັນໃດໄດ້ນໍ? ຈຶ່ງຕັດເຄື່ອງມັດໄດ້ທັງໝົດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ໂລກຖືກຄວາມຢາກມັດໄວ້
ຍ້ອນກຳຈັດຄວາມຢາກອອກໄປ ຈຶ່ງພົ້ນໄດ້
ຍ້ອນລະຄວາມຢາກ ຈຶ່ງຕັດເຄື່ອງມັດໄດ້ທັງໝົດ

**ອິດສາສູດທີ ໙ ຈົບ**

## ໑໐. ໂລກະສູດ

### ວ່າດ້ວຍໂລກ

[໗໐] ເທວະດາທູນຖາມ ວ່າ

ເມື່ອອັນໃດເກີດ ໂລກຈຶ່ງເກີດ
ໂລກທຳຄວາມເຊີຍຊິດໃນອັນໃດ? ໂລກຍຶດຖືອັນໃດ
ໂລກເດືອດຮ້ອນຍ້ອນອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ເມື່ອອາຍະຕະນະ ໖ ເກີດ ໂລກຈຶ່ງເກີດ
ໂລກທຳຄວາມເຊີຍຊິດໃນອາຍະຕະນະ ໖
ໂລກຍຶດຖືອາຍະຕະນະ ໖ ນັ້ນແລ
ໂລກເດືອດຮ້ອນຍ້ອນອາຍະຕະນະ ໖

**ໂລກະສູດທີ ໑໐ ຈົບ**

**ອັດທະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໙. ຄັດຕະວາວັກ

### ໝວດວ່າດ້ວຍການຂ້າ

## ໑. ຄັດຕະວາສູດ

### ວ່າດ້ວຍການຂ້າ

[໗໑] ເລື້ອງເກີດຂຶ້ນຢູ່ນະຄອນສາວັດຖີ

ເທວະດານັ້ນ ໄດ້ຢືນຢູ່ບ່ອນທີ່ສົມຄວນແລ້ວ ແລະໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ບຸກຄົນຂ້າອັນໃດໄດ້ຈຶ່ງຢູ່ເປັນສຸກ
ຂ້າອັນໃດ? ໄດ້ຈຶ່ງບໍ່ເສົ້າໂສກ ຂ້າແດ່ພຣະໂຄດົມ
ພຣະອົງຊົງພໍພຣະທະໄທການຂ້າທຳແນວໜຶ່ງ ຄືອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນຂ້າຄວາມໂກດໄດ້ຈຶ່ງຢູ່ເປັນສຸກ
ຂ້າຄວາມໂກດໄດ້ຈຶ່ງບໍ່ເສົ້າໂສກ ເທວະດາ
ພຣະອະຣິຍະທັງຫຼາຍສັນເສີນການຂ້າຄວາມໂກດ
ເຊິ່ງມີຮາກເປັນພິດ[១] ມີຍອດຫວານ
ຍ້ອນບຸກຄົນຂ້າຄວາມໂກດນັ້ນໄດ້ແລ້ວ ຈຶ່ງບໍ່ເສົ້າໂສກ

**ຄັດຕະວາສູດທີ ໑ ຈົບ**

# ໘. ຣະຖະສູດ

## ວ່າດ້ວຍລົດ

[໗໘] ເທວະດາທູນຖາມ ວ່າ

ອັນໃດນໍ? ເປັນເຄື່ອງໝາກົດຂອງລົດ
ອັນໃດນໍ? ເປັນເຄື່ອງໝາກົດຂອງໄຟ
ອັນໃດນໍ? ເປັນເຄື່ອງໝາກົດຂອງຣັດ
ອັນໃດນໍ? ເປັນເຄື່ອງໝາກົດຂອງຍິງ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

ທຸງເປັນເຄື່ອງໝາກົດຂອງລົດ
ຄວັນເປັນເຄື່ອງໝາກົດຂອງໄຟ
ພຣະຣາຊາເປັນເຄື່ອງໝາກົດຂອງຣັດ
ສາມີເປັນເຄື່ອງໝາກົດຂອງຍິງ[໑]

**ຣະຖະສູດທີ ໘ ຈົບ**

# ໙. ວິດຕະສູດ

## ວ່າດ້ວຍຊັບເຄື່ອງພໍໃຈ

[໗໙] ເທວະດາທູນຖາມ ວ່າ

ອັນໃດນໍ? ເປັນຊັບເຄື່ອງພໍໃຈທີ່ປະເສີດຂອງບຸຣຸດໃນໂລກນີ້
ອັນໃດນໍ? ທີ່ບຸກຄົນປະພຶດດີແລ້ວນຳຄວາມສຸກມາໃຫ້
ອັນໃດນໍ? ເປັນຣົດທີ່ດີກວ່າຣົດທັງຫຼາຍ
ບຸກຄົນມີຄວາມເປັນຢູ່ແນວໃດ? ນັກປາດທັງຫຼາຍ
ຈຶ່ງກ່າວວ່າມີຊີວິດປະເສີດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ສັດທາເປັນຊັບເຄື່ອງພໍໃຈທີ່ປະເສີດຂອງບຸຣຸດໃນໂລກນີ້
ທຳ[໒] ທີ່ບຸກຄົນປະພຶດດີແລ້ວນຳຄວາມສຸກມາໃຫ້

ສັດຈະທີ່ນັ້ນເປັນຣົດທີ່ດີກວ່າຣົດທັງຫຼາຍ
ບຸກຄົນມີຄວາມເປັນຢູ່ດ້ວຍປັນຍາ ນັກປາດທັງຫຼາຍ
ຈຶ່ງກ່າວວ່າມີຊີວິດປະເສີດ

**ວິດຕະສູດທີ ໓ ຈົບ**

## ໔. ວຸດຖິສູດ

### ວ່າດ້ວຍຝົນ

[໗໔] ເທວະດາທູນຖາມ ວ່າ

ບັນດາສິ່ງທີ່ງອກຂຶ້ນ ອັນໃດນໍ? ປະເສີດ
ບັນດາສິ່ງທີ່ຕົກລົງໄປ ອັນໃດນໍ? ປະເສີດ
ບັນດາສັດທີ່ຍ່າງໄດ້ ສັດປະເພດໃດປະເສີດ
ບັນດາຊົນຜູ້ເວົ້າ ໃຜເປັນຜູ້ປະເສີດ

ເທວະດາອົງໜຶ່ງກ່າວແກ້ ວ່າ

ບັນດາສິ່ງທີ່ງອກຂຶ້ນ ພືດປະເສີດ
ບັນດາສິ່ງທີ່ຕົກລົງໄປ ຝົນປະເສີດ
ບັນດາສັດທີ່ຍ່າງໄດ້ ງົວເປັນສັດປະເສີດ
ບັນດາຊົນຜູ້ເວົ້າ ບຸດເປັນຜູ້ປະເສີດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບັນດາສິ່ງທີ່ງອກຂຶ້ນ ຄວາມຮູ້ປະເສີດ
ບັນດາສິ່ງທີ່ຕົກລົງໄປ ຄວາມບໍ່ຮູ້ປະເສີດ
ບັນດາສັດທີ່ຍ່າງໄດ້ ພຣະສົງເປັນຜູ້ປະເສີດ
ບັນດາຊົນຜູ້ເວົ້າ ພຣະພຸດທະເຈົ້າເປັນຜູ້ປະເສີດ

**ວຸດຖິສູດທີ ໔ ຈົບ**

# ໕. ພີຕະສູດ

## ວ່າດ້ວຍຜູ້ຢ້ານ

[໗໕] ເທວະດາທູນຖາມ ວ່າ

ໝູ່ຊົນເປັນຈຳນວນຫຼາຍໃນໂລກນີ້ຍັງຈະຕ້ອງຢ້ານອັນໃດອີກນໍ?
ຍ້ອນພຣະພຸດທະເຈົ້າຕັດບອກທາງໄວ້ແລ້ວດ້ວຍເຫດທັງຫຼາຍ[໑]
ຂ້າແດ່ ພຣະໂຄດົມຜູ້ມີປັນຍາຄືແຜ່ນດິນ
ຂ້າພຣະອົງຂໍທູນຖາມພຣະອົງເຖິງເຫດນັ້ນ
ບຸກຄົນຕັ້ງຢູ່ໃນທຳອັນໃດ ຈຶ່ງບໍ່ຢ້ານປະຣະໂລກ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນຜູ້ຕັ້ງວາຈາແລະໃຈໄວ້ໂດຍຖືກຕ້ອງ
ບໍ່ໄດ້ເຮັດບາບທາງກາຍ ຢູ່ຄອງເຮືອນທີ່ມີເຂົ້າແລະນ້ຳຫຼາຍ
ເປັນຜູ້ມີສັດທາ ໑ ເປັນຜູ້ອ່ອນໂຍນ ໑
ມີປົກກະຕິເອື້ອເຟື້ອເຜື່ອແຜ່ ໑ ຮູ້ເຈລະຈາປາໄສ ໑
ຜູ້ຕັ້ງຢູ່ໃນທຳ ໔ ປະການນີ້ ຊື່ວ່າຜູ້ຕັ້ງຢູ່ໃນທຳ
ຜູ້ນັ້ນຈຶ່ງຈະບໍ່ຢ້ານປະຣະໂລກ

**ພີຕະສູດທີ ໕ ຈົບ**

# ໖. ນະຊີຣະສູດ

## ວ່າດ້ວຍສິ່ງທີ່ບໍ່ຊຸດໂຊມ

[໗໖] ເທວະດາທູນຖາມ ວ່າ

ອັນໃດນໍ? ຍ່ອມຊຸດໂຊມ
ອັນໃດນໍ? ຍ່ອມບໍ່ຊຸດໂຊມ
ອັນໃດນໍ? ທ່ານຮຽກວ່າທາງຜິດ
ອັນໃດນໍ? ເປັນອັນຕະລາຍຕໍ່ທຳ
ອັນໃດນໍ? ໝົດໄປຕາມຄືນແລະວັນ
ອັນໃດນໍ? ເປັນມົນທິນຂອງພົມມະຈັນ

ອັນໃດນໍ? ບໍ່ແມ່ນນ້ຳ ແຕ່ເປັນເຄື່ອງຊຳຣະລ້າງ
ໃນໂລກມີປ່ອງຈັກປ່ອງ ທີ່ຈິດຕັ້ງຢູ່ບໍ່ໄດ້
ຂ້າພຣະອົງມາເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າ
ວ່າຈະຮູ້ຂໍ້ຄວາມນັ້ນໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຮູບຂອງສັດທັງຫຼາຍຍ່ອມຊຸດໂຊມ
ຊື່ແລະໂຄດຍ່ອມບໍ່ຊຸດໂຊມ
ຣາຄະທ່ານຮຽກວ່າທາງຜິດ
ຄວາມໂລບເປັນອັນຕະລາຍຕໍ່ທຳ
ອາຍຸໝົດໄປຕາມຄືນແລະວັນ
ຍິງເປັນມົນທິນຂອງພົມມະຈັນ ໝູ່ສັດນີ້ຂ້ອງຢູ່ໃນຍິງນັ້ນ
ຕະບະແລະພົມມະຈັນນັ້ນບໍ່ແມ່ນນ້ຳ ແຕ່ເປັນເຄື່ອງຊຳຣະລ້າງ
ໃນໂລກມີປ່ອງຢູ່ ໖ ປ່ອງ ທີ່ຈິດຕັ້ງຢູ່ບໍ່ໄດ້ ຄື
ຄວາມຂີ້ຄ້ານ ໑ ຄວາມຜະໝາດ ໑ ຄວາມບໍ່ດຸໝັ່ນ ໑
ຄວາມບໍ່ສັງລວມ ໑ ຄວາມມັກຫຼັບ ໑ ຄວາມອ້າງເລດບໍ່ເຮັດວຽກ ໑
ເພິ່ງເວັ້ນປ່ອງທັງ ໖ ໂດຍປະການທັງປວງເທີ້ນ

**ນະຊິຣະສູດທີ ໖ ຈົບ**

## ໗. ອິດສະຣະສູດ

### ວ່າດ້ວຍຄວາມເປັນໃຫຍ່

[໗໗] ເທວະດາທູນຖາມ ວ່າ

ອັນໃດນໍ? ເປັນໃຫຍ່ໃນໂລກ
ອັນໃດນໍ? ເປັນສິ່ງສູງສຸດບັນດາເຄື່ອງຂອງທັງຫຼາຍ
ອັນໃດນໍ? ເປັນດັ່ງຂີ້ມ້ຽງອາວຸດໃນໂລກ
ອັນໃດນໍ? ເປັນສະໜຽດຈັງໄຣໃນໂລກ
ໃຜນຳຂອງໄປຍ່ອມຖືກຫ້າມ ແຕ່ໃຜນຳຂອງໄປກັບເປັນທີ່ຮັກ
ໃຜມາຢູ່ປະຈຳ ໆ ບັນດິດຍ່ອມຍິນດີ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ອຳນາດເປັນໃຫຍ່ໃນໂລກ
ຍິງເປັນສິ່ງສູງສຸດບັນດາເຄື່ອງຂອງທັງຫຼາຍ
ຄວາມໂກດເປັນດັ່ງຂີ້ມ້ຽງອາວຸດໃນໂລກ
ພວກໂຈນເປັນສະໜຽດຈັງໄຮໃນໂລກ
ໂຈນນຳຂອງໄປຍ່ອມຖືກຫ້າມ ແຕ່ສະມະນະນຳຂອງໄປກັບເປັນທີ່ຮັກ
ສະມະນະມາຢູ່ປະຈຳ ໆ ບັນດິດຍ່ອມຍິນດີ

**ອິດສະຣະສູດທີ ໗ ຈົບ**

## ໘. ກາມະສູດ

### ວ່າດ້ວຍຜູ້ຕ້ອງການປະໂຫຍດ

[໗໘] ເທວະດາທູນຖາມ ວ່າ

ກຸນລະບຸດຜູ້ຕ້ອງການປະໂຫຍດ
ບໍ່ຄວນໃຫ້ອັນໃດນໍ? ບໍ່ຄວນສະລະອັນໃດນໍ?
ອັນໃດນໍ? ທີ່ດີຄວນປ່ອຍ ແຕ່ທີ່ບໍ່ດີບໍ່ຄວນປ່ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸຣຸດບໍ່ຄວນໃຫ້ຕົນ ບໍ່ຄວນສະລະຕົນ
ວາຈາທີ່ດີຄວນປ່ອຍ ແຕ່ວາຈາທີ່ບໍ່ດີບໍ່ຄວນປ່ອຍ

**ກາມະສູດທີ ໘ ຈົບ**

## ໙. ປາເຖີຍຍະສູດ

### ວ່າດ້ວຍສະບຽງ

[໗໙] ເທວະດາທູນຖາມ ວ່າ
ອັນໃດນໍ? ຮິບໂຮມໄວ້ເຊິ່ງສະບຽງ
ອັນໃດນໍ? ເປັນບໍ່ເກີດແຫ່ງໂພຄະຊັບທັງຫຼາຍ
ອັນໃດນໍ? ໄລ່ຕ້ອນນໍຣະຊົນໄປ ອັນໃດນໍ? ລະໄດ້ຍາກໃນໂລກ

ສັດເປັນຈຳນວນຫຼາຍຕິດຢູ່ໃນອັນໃດນໍ? ຄືນົກຕິດບ້ວງ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ສັດທາຣົບໂຮມໄວ້ເຊິ່ງສະບຽງ
ສິຣິເປັນບໍ່ເກີດແຫ່ງໂພຄະຊັບທັງຫຼາຍ
ຄວາມຢາກໄລ່ຕ້ອນນໍຣະຊົນໄປ
ຄວາມຢາກລະໄດ້ຍາກໃນໂລກ
ສັດເປັນຈຳນວນຫຼາຍຕິດຢູ່ໃນຄວາມຢາກ ຄືນົກຕິດບ້ວງ ສັນນັ້ນ

**ປາເຖີຍຍະສູດທີ ໗ ຈົບ**

# ໑໐. ປັດໂຊຕະສູດ

## ວ່າດ້ວຍແສງສະຫວ່າງ

[໗໐] ເທວະດາທູນຖາມ ວ່າ

ອັນໃດນໍ? ເປັນແສງສະຫວ່າງໃນໂລກ
ອັນໃດນໍ? ເປັນທຳເຄື່ອງຕື່ນຢູ່ໃນໂລກ
ອັນໃດນໍ? ເປັນສະຫາຍໃນການເຮັດວຽກງານຂອງຜູ້ເປັນຢູ່
ອັນໃດນໍ? ເປັນເຄື່ອງສືບຕໍ່ຊີວິດຂອງເຂົາ
ອັນໃດນໍ? ຍ່ອມລ້ຽງບຸກຄົນຜູ້ຂີ້ຄ້ານແລະບໍ່ຂີ້ຄ້ານ
ຄືມານດາລ້ຽງເບິ່ງລູກ
ໝູ່ສັດທີ່ມີຊີວິດຢູ່ເທິງແຜ່ນດິນ ອາໄສອັນໃດລ້ຽງຊີບ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ປັນຍາເປັນແສງສະຫວ່າງໃນໂລກ
ສະຕິເປັນທຳເຄື່ອງຕື່ນຢູ່ໃນໂລກ
ຝູງງົວເປັນສະຫາຍໃນການເຮັດວຽກງານຂອງຜູ້ເປັນຢູ່
ໄຖເປັນເຄື່ອງສືບຕໍ່ຊີວິດຂອງເຂົາ
ຝົນຍ່ອມລ້ຽງບຸກຄົນຜູ້ຂີ້ຄ້ານແລະບໍ່ຂີ້ຄ້ານ
ຄືມານດາລ້ຽງເບິ່ງລູກ
ໝູ່ສັດທີ່ມີຊີວິດຢູ່ເທິງແຜ່ນດິນ ອາໄສຝົນລ້ຽງຊີບ

**ປັດໂຊຕະສູດທີ ໑໐ ຈົບ**

# ໑໑. ອະຣະນະສູດ

## ວ່າດ້ວຍຂ້າເສິກ

[໗໑] ເທວະດາທູນຖາມ ວ່າ

ຄົນເຫຼົ່າໃດ? ບໍ່ເປັນຂ້າເສິກໃນໂລກນີ້
ພົມມະຈັນທີ່ຢູ່ຈົບແລ້ວຂອງຄົນເຫຼົ່າໃດ? ບໍ່ເສື່ອມ
ຄົນເຫຼົ່າໃດ? ກຳນົດຮູ້ຄວາມຢາກໄດ້ໃນໂລກນີ້
ຄວາມເປັນອິດສະຫຼະຍ່ອມມີແກ່ຄົນເຫຼົ່າໃດ? ທຸກເມື່ອ
ມານດາແລະບິດາ ຫຼື ພີ່ນ້ອງໄຫວ້ບຸກຄົນນັ້ນ ຜູ້ຕັ້ງໝັ້ນ(ໃນສິນ) ຄືໃຜນໍ?
ກະສັດທັງຫຼາຍ ອະພິວາດໃຜໃນໂລກນີ້ ແມ່ນຈະມີຊາດຕໍ່າ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ສະມະນະທັງຫຼາຍໃນທຳວິໄນບໍ່ເປັນຂ້າເສິກໃນໂລກນີ້
ພົມມະຈັນທີ່ຢູ່ຈົບແລ້ວຂອງສະມະນະທັງຫຼາຍຍ່ອມບໍ່ເສື່ອມ
ສະມະນະທັງຫຼາຍຍ່ອມກຳນົດຮູ້ຄວາມຢາກໄດ້
ຄວາມເປັນອິດສະຫຼະຍ່ອມມີແກ່ສະມະນະທັງຫຼາຍທຸກເມື່ອ
ມານດາແລະບິດາ ຫຼື ພີ່ນ້ອງໄຫວ້ບຸກຄົນນັ້ນ ຜູ້ຕັ້ງໝັ້ນ (ໃນສິນ) ຄືສະມະນະ
ກະສັດທັງຫຼາຍອະພິວາດສະມະນະໃນໂລກນີ້ ຜູ້ມີຊາດຕໍ່າ

**ອະຣະນະສູດທີ ໑໑ ຈົບ**

**ຄັດຕະວາວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຄັດຕະວາສູດ
໒. ວິດຕະສູດ
໓. ພິຕະສູດ
໗. ອິດສະຣະສູດ
໙. ປາເຖີຍຍະສູດ
໑໑. ອະຣະນະສູດ
໔. ຣະຖະສູດ
໕. ວຸດຖິສູດ
໖. ນະຊີຣະສູດ
໘. ກາມະສູດ
໑໐. ປັດໂຊຕະສູດ

**ເທວະຕາສັງຍຸດ ຈົບບໍລິບູນ**

# ໔. ເທວະປຸດຕະສັງຍຸດ

# ໑. ປະຖົມວັກ

### ໝວດທີ ໑

## ໑. ປະຖົມກັດສະປະສູດ

### ວ່າດ້ວຍກັດສະປະເທບພະບຸດ ສູດທີ ໑

[໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ກັດສະປະເທບພະບຸດມີວັນນະ ງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງປະກາດພິກຂຸ ແຕ່ບໍ່ຊົງປະກາດຄໍາສັ່ງສອນສໍາລັບພິກຂຸ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ກັດສະປະເທບພະບຸດ ຖ້າເປັນແນວນັ້ນ ການປະກາດຄໍາສັ່ງສອນນັ້ນ ຈົ່ງຜາກົດແກ່ທ່ານໃນບ່ອນນີ້ເທີ້ນ

ກັດສະປະເທບພະບຸດຂາບທູນ ວ່າ

ບຸກຄົນເພິ່ງສຶກສາຄໍາສຸພາສິດ[1]
ສຶກສາການເຂົ້າໄປນັ່ງໃກ້ສະມະນະ
ສຶກສາການນັ່ງໃນບ່ອນສະງັດແຕ່ຜູ້ດຽວ
ແລະສຶກສາການສະງົບລະງັບຈິດ

ກັດສະປະເທບພະບຸດໄດ້ກ່າວດັ່ງນີ້ ພຣະສາດສະດາຊົງພໍພຣະທະໄທແລ້ວ ລໍາດັບນັ້ນກັດສະປະເທບພະບຸດຮູ້ວ່າ ພຣະສາດສະດາຂອງເຮົາຊົງພໍພຣະທະໄທແລ້ວ ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທໍາປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

**ປະຖົມກັດສະປະສູດທີ ໑ ຈົບ**

# ໔. ທຸຕິຍະກັດສະປະສູດ

## ວ່າດ້ວຍກັດສະປະເທບພະບຸດ ສູດທີ ໔

[໗໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ກັດສະປະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຖ້າພິກຂຸຫວັງການບັນລຸທຳທີ່ເປັນຫົວໃຈ[๑]
ມີທຳທີ່ເປັນຫົວໃຈເປັນອານິສົງ
ທ່ານເພິ່ງເປັນຜູ້ມີຊານ ມີຈິດລຸດພົ້ນ
ຮູ້ຄວາມເກີດຂຶ້ນແລະຄວາມເສື່ອມໄປແຫ່ງໂລກ[๒]
ມີໃຈດີ ບໍ່ມີຕັນຫາແລະທິດຖິອາໄສ[๓]

**ທຸຕິຍະກັດສະປະສູດທີ ໔ ຈົບ**

# ໕. ມາຄະສູດ

## ວ່າດ້ວຍມາຄະເທບພະບຸດ

[໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັນເມື່ອຣາຕີຜ່ານໄປ ມາຄະເທບພະບຸດມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງ ທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ບຸກຄົນຂ້າອັນໃດ? ໄດ້ຈຶ່ງຢູ່ເປັນສຸກ
ຂ້າອັນໃດ? ໄດ້ຈຶ່ງບໍ່ເສົ້າໂສກ ຂ້າແດ່ພຣະໂຄດົມ
ພຣະອົງຊົງພໍພຣະຫະໄທການຂ້າທຳແນວໜຶ່ງຄືອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນຂ້າຄວາມໂກດໄດ້ຈຶ່ງຢູ່ເປັນສຸກ
ຂ້າຄວາມໂກດໄດ້ຈຶ່ງບໍ່ເສົ້າໂສກ ທ້າວວັດຕະຣະພູ[๑]
ພຣະອະຣິຍະທັງຫຼາຍສັນເສີນການຂ້າຄວາມໂກດ

ເຊິ່ງມີຮາກເປັນພິດ ມີຍອດຫວານ
ຍ້ອນບຸກຄົນຂ້າຄວາມໂກດນັ້ນໄດ້ແລ້ວ ຈຶ່ງບໍ່ເສົ້າໂສກ

**ມາຄະສູດທີ ໓ ຈົບ**

# ໔. ມາຄະທະສູດ

## ວ່າດ້ວຍມາຄົດເທບພະບຸດ

[໗໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ມາຄົດເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ໂລກຮຸ່ງເຮືອງຍ້ອນແສງສະຫວ່າງເຫຼົ່າໃດ?
ແສງສະຫວ່າງເຫຼົ່ານັ້ນມີຢູ່ທີ່ໃດ? ໃນໂລກ
ພວກຂ້າພຣະອົງມາເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າ
ວ່າຈະຮູ້ແສງສະຫວ່າງນັ້ນໄດ້ແນວໃດ?[໒]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ໃນໂລກມີແສງສະຫວ່າງຢູ່ ໔ ຢ່າງ
ຢ່າງທີ່ ໕ ບໍ່ມີໃນໂລກນີ້ ຄື
(໑) ດວງອາທິດສ່ອງສະຫວ່າງໃນກາງເວັນ
(໒) ດວງຈັນສ່ອງສະຫວ່າງໃນກາງຄືນ
(໓) ໄຟສ່ອງສະຫວ່າງທັງກາງເວັນແລະກາງຄືນທຸກຫົນທຸກແຫ່ງ
(໔) ພຣະສຳມາສຳພຸດທະເຈົ້າປະເສີດກວ່າແສງສະຫວ່າງທັງຫຼາຍ
ແສງສະຫວ່າງນີ້ເປັນແສງສະຫວ່າງຢ່າງປະເສີດ[໓]

**ມາຄະທະສູດທີ ໔ ຈົບ**

# ໕. ທາມະລິສູດ

## ວ່າດ້ວຍທາມະລິເທບພະບຸດ

[໗໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັນເມື່ອຣາຕີຜ່ານໄປ ທາມະລິເທບພະບຸດມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພາມຜູ້ບໍ່ຂີ້ຄ້ານເພິ່ງທຳຄວາມພຽນນີ້
ຍ້ອນລະການທັງຫຼາຍໄດ້ (ແລະ) ຍ້ອນຄວາມພຽນນັ້ນ
ເຂົາຈຶ່ງບໍ່ຫວັງພົບ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ທາມະລິເທບພະບຸດ ກິດບໍ່ມີແກ່ພາມ[໑]
ຍ້ອນພາມເຮັດກິດສຳເລັດແລ້ວ
ຕາບໃດບຸກຄົນຍັງບໍ່ໄດ້ທ່າຈອດໃນແມ່ນ້ຳທັງຫຼາຍ
ຕາບນັ້ນເຂົາຍັງຕ້ອງພຽນດ້ວຍໂຕເອງທຸກຢ່າງ

ແຕ່ເມື່ອໄດ້ທ່າຈອດແລ້ວ ຢືນຢູ່ເທິງບົກ
ເຂົາເປັນຜູ້ເຖິງຝັ່ງແລ້ວຈຶ່ງບໍ່ຕ້ອງພຽນອີກ
ທາມະລິເທບພະບຸດ ນີ້ເປັນຂໍ້ອຸປະມາສຳລັບພາມ

ຜູ້ສິ້ນອາສະວະແລ້ວ ຜູ້ມີປັນຍາເຄື່ອງບໍລິຫານ ຜູ້ມີຊານ
ຍ້ອນເຂົາເຖິງທີ່ສຸດແຫ່ງຊາດແລະມໍລະນະ
ເປັນຜູ້ເຖິງຝັ່ງແລ້ວຈຶ່ງບໍ່ຕ້ອງພຽນ

**ທາມະລິສູດທີ ໕ ຈົບ**

# ໖. ກາມະທະສູດ

## ວ່າດ້ວຍກາມະທະເທບພະບຸດ

[໘໗] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ກາມະທະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ສະມະນະທຳພໍ່າເພັງໄດ້ຍາກ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ສະມະນະທຳພໍ່າເພັງໄດ້ຍາກຍິ່ງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ກາມະທະເທບພະບຸດ ຊົນທັງຫຼາຍຜູ້ຕັ້ງໝັ້ນໃນສິນ
ຂອງພຣະເສຂະ ຜູ້ຕັ້ງຕົນໄວ້ໝັ້ນຄົງແລ້ວ
ຍ່ອມພໍ່າເພັງສະມະນະທຳທີ່ພໍ່າເພັງໄດ້ຍາກ
ຄວາມສັນໂດດ໑ຍ່ອມນຳຄວາມສຸກມາໃຫ້
ແກ່ບຸກຄົນຜູ້ອອກຈາກເຮືອນບວດ

ກາມະທະເທບພະບຸດຂາບທູນ ວ່າ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ
ສິ່ງທີ່ໄດ້ຍາກນີ້ ຄື ຄວາມສັນໂດດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ກາມະທະເທບພະບຸດ ຊົນເຫຼົ່າໃດ
ຍິນດີໃນຄວາມສະງົບທາງໃຈ
ມີໃຈຍິນດີໃນການອົບຮົມຈິດທັງກາງເວັນແລະກາງຄືນ
ຊົນເຫຼົ່ານັ້ນ ຍ່ອມໄດ້ແມ່ນສິ່ງທີ່ໄດ້ຍາກ

ກາມະທະເທບພະບຸດຂາບທູນ ວ່າ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ
ສິ່ງທີ່ຕັ້ງໝັ້ນໄດ້ຍາກນີ້ ຄື ຈິດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ກາມະທະເທບພະບຸດ ຊົນເຫຼົ່າໃດ?
ຍິນດີໃນຄວາມສະງົບແຫ່ງອິນຊີ
ຊົນເຫຼົ່ານັ້ນ ຍ່ອມຕັ້ງຈິດທີ່ຕັ້ງໝັ້ນໄດ້ຍາກໃຫ້ຕັ້ງໝັ້ນໄດ້
ກາມະທະເທບພະບຸດ ພຣະອະຣິຍະເຫຼົ່ານັ້ນ ຕັດຕາໜ່າງແຫ່ງມັດຈຸໄດ້ແລ້ວ

ກາມະທະເທບພະບຸດຂາບທູນ ວ່າ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ
ທາງທີ່ໄປໄດ້ຍາກ ຄື ທາງທີ່ບໍ່ສະໝໍ່າສະເໝີ໑

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ກາມະທະເທບພະບຸດ ອະຣິຍະບຸກຄົນທັງຫຼາຍ
ຍ່ອມໄປໄດ້ແມ່ນໃນທາງທີ່ໄປໄດ້ຍາກ ເຊິ່ງເປັນທາງທີ່ບໍ່ສະໝໍ່າສະເໝີ
ສ່ວນຜູ້ບໍ່ແມ່ນອະຣິຍະບຸກຄົນຍ່ອມຈົມ
ຕົກລົງໄປໃນທາງທີ່ບໍ່ສະໝໍ່າສະເໝີ
ທາງນັ້ນສະໝໍ່າສະເໝີສໍາລັບອະຣິຍະບຸກຄົນທັງຫຼາຍ
ຍ້ອນອະຣິຍະບຸກຄົນທັງຫຼາຍ ເປັນຜູ້ສະໝໍ່າສະເໝີໃນທາງທີ່ບໍ່ສະໝໍ່າສະເໝີ

**ກາມະທະສູດທີ ໖ ຈົບ**

# ໗. ປັນຈາລະຈັນທະສູດ

## ວ່າດ້ວຍປັນຈາລະຈັນດະເທບພະບຸດ

[໘໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ປັນຈາລະຈັນດະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າວ່າ

ແມ່ນໃນບ່ອນຄັບຂັນ[໑]ຜູ້ມີປັນຍາຄືແຜ່ນດິນກໍຍັງໄດ້ໂອກາດ[໒]
ຜູ້ໃດບັນລຸຊານ ຜູ້ນັ້ນເປັນຜູ້ຕື່ນ
ເປັນຜູ້ຫຼີກອອກໄດ້ຢ່າງອົງອາດ ເປັນມຸນີ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ (ປັນຈາລະຈັນດະ)

ຊົນເຫຼົ່າໃດ? ແມ່ນຢູ່ໃນບ່ອນຄັບຂັນ
ແຕ່ກັບໄດ້ສະຕິເພື່ອການບັນລຸທໍາ ຄື ນິບພານ
ຊົນເຫຼົ່ານັ້ນ ຕັ້ງໝັ້ນດີແລ້ວໂດຍຖືກຕ້ອງ

**ປັນຈາລະຈັນທະສູດທີ ໗ ຈົບ**

# ໘. ຕາຍະນະສູດ

## ວ່າດ້ວຍຕາຍະນະເທບພະບຸດ

[໘໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັນເມື່ອຣາຕີຜ່ານໄປ ຕາຍະນະເທບພະບຸດຜູ້ເຄີຍເປັນເຈົ້າລັດທິມາກ່ອນ ມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພາມ ທ່ານຈົ່ງພະຍາຍາມຕັດກະແສ[១]
ຈົ່ງບັນເທົາກາມສາເຫີ້ນ
ຍ້ອນຫາກມຸນີບໍ່ລະກາມ
ຍ່ອມເຂົ້າເຖິງຄວາມມີຈິດແນ່ວແນ່[໒]ບໍ່ໄດ້

ຖ້າບຸກຄົນຈະທຳຄວາມພຽນ
ເພິ່ງທຳຄວາມພຽນນັ້ນທັນທີ
ເພິ່ງສູ້ຊົນທຳຄວາມພຽນນັ້ນໃຫ້ໝັ້ນຄົງ
ຍ້ອນວ່າການບັນພະຊາທີ່ປະຕິບັດຫຍ່ອນຍານ
ຍ່ອມໂຮຍທຸລີຄືກິເລດໃຫ້ເປີເປື້ອນຍິ່ງຂຶ້ນ

ຄວາມຊົ່ວບໍ່ເຮັດສາເລີຍດີກວ່າ
ຍ້ອນເຮັດແລ້ວຍ່ອມເດືອດຮ້ອນພາຍຫຼັງ
ຄວາມດີໃດເຮັດແລ້ວບໍ່ເດືອດຮ້ອນພາຍຫຼັງ
ທຳຄວາມດີນັ້ນໄວ້ດີກວ່າ

ຫຍ້າຄາທີ່ບຸກຄົນຈັບໄວ້ບໍ່ດີ
ຍ່ອມບາດມືຕົນເອງໄດ້ ສັນໃດ
ຄວາມເປັນສະມະນະທີ່ບຸກຄົນປະຕິບັດບໍ່ດີ
ຍ່ອມດຶງເຂົ້າໄປສູ່ນະຮົກໄດ້ ສັນນັ້ນ

ກຳທີ່ຫຍ່ອນຍານແນວໃດແນວໜຶ່ງ ຂໍ້ວັດປະຕິບັດທີ່ເສົ້າໝອງ
ແລະພົມມະຈັນທີ່ຣະນຶກເຖິງດ້ວຍຄວາມຣະແວງສົງໄສ
ທັງ ໓ ນັ້ນ ບໍ່ມີຜົນຫຼາຍ[໓]

ຕາຍະນະເທບພະບຸດເມື່ອກ່າວດັ່ງນີ້ແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

ຄັນເມື່ອຣາຕີນັ້ນລ່ວງໄປແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາ

ຕັດວ່າ ພິກຂຸທັງຫຼາຍ ເມື່ອຄືນນີ້ ຕາຍະນະເທບພະບຸດຜູ້ເຄີຍເປັນເຈົ້າລັດທິມາກ່ອນ ມີວັນນະ ງົດງາມຢ່າງຍິ່ງ ເມື່ອຣາຕີຜ່ານໄປ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າມາຫາເຮົາ ຮອດບ່ອນຢູ່ ອະພິວາດ ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖານີ້ໃນສຳນັກຂອງເຮົາ ວ່າ

ພາມ ທ່ານຈົ່ງພະຍາຍາມຕັດກະແສ໑
ຈົ່ງບັນເທົາກາມສາເຫີ້ນ
ຍ້ອນຫາກມຸນີບໍ່ລະກາມ
ຍ່ອມເຂົ້າເຖິງຄວາມມີຈິດແນ່ວແນ່໌ບໍ່ໄດ້

ຖ້າບຸກຄົນຈະທຳຄວາມພຽນ
ເພິ່ງທຳຄວາມພຽນນັ້ນທັນທີ
ເພິ່ງສູ້ຊົນທຳຄວາມພຽນນັ້ນໃຫ້ໝັ້ນຄົງ
ຍ້ອນວ່າການບັນພະຊາທີ່ປະຕິບັດຫຍ່ອນຍານ
ຍ່ອມໂຮຍທຸລີຄືກິເລດໃຫ້ເປິເປື້ອນຍິ່ງຂຶ້ນ

ຄວາມຊົ່ວບໍ່ເຮັດສາເລີຍດີກວ່າ
ຍ້ອນເຮັດແລ້ວຍ່ອມເດືອດຮ້ອນພາຍຫຼັງ
ຄວາມດີໃດເຮັດແລ້ວບໍ່ເດືອດຮ້ອນພາຍຫຼັງ
ທຳຄວາມດີນັ້ນໄວ້ດີກວ່າ

ຫຍ້າຄາທີ່ບຸກຄົນຈັບໄວ້ບໍ່ດີ
ຍ່ອມບາດມືຕົນເອງໄດ້ ສັນໃດ
ຄວາມເປັນສະມະນະທີ່ບຸກຄົນປະຕິບັດບໍ່ດີ
ຍ່ອມດຶງເຂົ້າໄປສູ່ນະຮົກໄດ້ ສັນນັ້ນ

ກຳທີ່ຫຍ່ອນຍານແນວໃດແນວໜຶ່ງ ຂໍ້ວັດປະຕິບັດທີ່ເສົ້າໝອງ
ແລະພົມມະຈັນທີ່ຣະນຶກເຖິງດ້ວຍຄວາມຣະແວງສົງໄສ
ທັງ ໓ ນັ້ນ ບໍ່ມີຜົນຫຼາຍ

ຕາຍະນະເທບພະບຸດເມື່ອກ່າວດັ່ງນີ້ແລ້ວໄດ້ອະພິວາດເຮົາ ກະທຳປະທັກຂິນແລ້ວຫາຍ ໂຕໄປໃນບ່ອນນັ້ນເອງ ທ່ານທັງຫຼາຍ ຈົ່ງສຶກສາ ຮ່ຳຮຽນ ຊົງຈຳຕາຍະນະຄາຖາໄວ້ ພິກຂຸທັງ ຫຼາຍ ຕາຍະນະຄາຖາປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນແຫ່ງພົມມະຈັນ໑

**ຕາຍະນະສູດທີ ๘ ຈົບ**

# ໙. ຈັນທິມະສູດ

## ວ່າດ້ວຍຈັນທິມະເທບພະບຸດ

[໙໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ຈັນທິມະເທບພະບຸດຖືກອະສຸລິນທະຣາຫູເຂົ້າຈັບໂຕໄວ້ ດັ່ງນັ້ນ ຈັນທິມະເທບພະບຸດຣະນຶກເຖິງພຣະຜູ້ມີພຣະພາກເຈົ້າ ໄດ້ກ່າວຄາຖານີ້ໃນເວລານັ້ນ ວ່າ

ຂ້າແດ່ ພຣະພຸດທະເຈົ້າຜູ້ແກ່ກ້າ
ຂໍຄວາມນອບນ້ອມຈົ່ງມີແດ່ພຣະອົງ
ພຣະອົງເປັນຜູ້ລຸດພົ້ນແລ້ວຈາກກິເລດທັງປວງ
ຂ້າພຣະອົງຕົກຢູ່ໃນພາວະຄັບຂັນ
ຂໍພຣະອົງຈົ່ງເປັນສະຣະນະແກ່ຂ້າພຣະອົງດ້ວຍເທີ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຜາຣົບຈັນທິມະເທບພະບຸດ ໄດ້ຕັດກັບອະສຸລິນທະຣາຫູ ດ້ວຍພຣະຄາຖາ ວ່າ

ຈັນທິມະເທບພະບຸດເຖິງຕະຖາຄົດຜູ້ເປັນພຣະອະຣະຫັນເປັນສະຣະນະ
ຣາຫູ ທ່ານຈົ່ງປ່ອຍຈັນທິມະເທບພະບຸດສາເທີ້ນ
ພຣະພຸດທະເຈົ້າທັງຫຼາຍ ເປັນຜູ້ອະນຸເຄາະສັດໂລກ

ລຳດັບນັ້ນ ອະສຸລິນທະຣາຫູປ່ອຍຈັນທິມະເທບພະບຸດແລ້ວ ກໍເລັ່ງຟ້າວເຂົ້າໄປຫາທ້າວເວປະຈິດຕິຈອມອະສູນຮອດບ່ອນຢູ່ ເປັນຜູ້ເສົ້າສະຫຼົດໃຈ ເກີດຂົນຫົວລຸກ ໄດ້ຢືນຢູ່ບ່ອນທີ່ສົມ ຄວນ

ທ້າວເວປະຈິດຕິຈອມອະສູນ ໄດ້ກ່າວກັບອະສຸລິນທະຣາຫູຜູ້ຢືນຢູ່ບ່ອນທີ່ສົມຄວນ ດ້ວຍຄາຖາ ວ່າ

ຣາຫູ ເປັນຫຍັງ? ທ່ານຈຶ່ງຟ້າວປ່ອຍຈັນທິມະເທບພະບຸດໄປນໍ?
ເປັນຫຍັງ? ທ່ານຈຶ່ງເສົ້າສະຫຼົດໃຈ ມາຢືນຢ້ານຢູ່ນໍ?
ອະສຸລິນທະຣາຫູກ່າວ ວ່າ
ຂ້າພະເຈົ້າຖືກຂັບດ້ວຍຄາຖາຂອງພຣະພຸດທະເຈົ້າ
ຫາກຂ້າພະເຈົ້າບໍ່ປ່ອຍຈັນທິມະເທບພະບຸດ
ຫົວຂອງຂ້າພະເຈົ້າກໍຈະແຕກອອກເປັນ ໗ ສ່ຽງ
ມີຊີວິດຢູ່ກໍຈະບໍ່ໄດ້ຮັບຄວາມສຸກເລີຍ

**ຈັນທິມະສູດທີ ໙ ຈົບ**

# ໑໐. ສຸຣິຍະສູດ

## ວ່າດ້ວຍສຸຣິຍະເທບພະບຸດ

[໖໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ສຸຣິຍະເທບພະບຸດຖືກອະສຸລິນທະຣາຫູເຂົ້າຈັບໂຕໄວ້ ຄັ້ງນັ້ນ ສຸຣິຍະເທບພະບຸດຣະນຶກເຖິງ ພຣະຜູ້ມີພຣະພາກເຈົ້າ ໄດ້ກ່າວຄາຖານີ້ໃນເວລານັ້ນ ວ່າ

ຂ້າແດ່ ພຣະພຸດທະເຈົ້າຜູ້ແກ່ກ້າ
ຂໍຄວາມນອບນ້ອມຈົ່ງມີແດ່ພຣະອົງ
ພຣະອົງເປັນຜູ້ລຸດພົ້ນແລ້ວຈາກກິເລດທັງປວງ
ຂ້າພຣະອົງຕົກຢູ່ໃນພາວະຄັບຂັນ
ຂໍພຣະອົງຈົ່ງເປັນສະຣະນະແກ່ຂ້າພຣະອົງດ້ວຍເທີ້ນ[១]

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຜາຣົບສຸຣິຍະເທບພະບຸດ ໄດ້ຕັດກັບອະສຸລິນທະຣາຫູ ດ້ວຍພຣະຄາຖາ ວ່າ

ສຸຣິຍະເທບພະບຸດເຖິງຕະຖາຄົດຜູ້ເປັນພຣະອະຣະຫັນເປັນສະຣະນະ
ຣາຫູ ທ່ານຈົ່ງປ່ອຍສຸຣິຍະເທບພະບຸດສາເທີ້ນ
ພຣະພຸດທະເຈົ້າທັງຫຼາຍ ເປັນຜູ້ອະນຸເຄາະສັດໂລກ
ສຸຣິຍະເທບພະບຸດເປັນຜູ້ສ່ອງແສງ ທຳຄວາມສະຫວ່າງໃນບ່ອນມືດມິດ
ມີສັນຖານເປັນວົງມົນ ມີອຳນາດສູງ
ທ່ານຢ່າອົມສຸຣິຍະເທບພະບຸດຜູ້ທ່ຽວໄປໃນອາກາດເລີຍ
ຣາຫູ ທ່ານຈົ່ງປ່ອຍສຸຣິຍະເທບພະບຸດຜູ້ເປັນບຸດຂອງເຮົາສາເທີ້ນ

ລຳດັບນັ້ນ ອະສຸລິນທະຣາຫູປ່ອຍສຸຣິຍະເທບພະບຸດແລ້ວ ກໍເລັ່ງຟ້າວເຂົ້າໄປຫາທ້າວເວປະຈິດຕິຈອມອະສູນຮອດບ່ອນຢູ່ ເປັນຜູ້ເສົ້າສະຫຼົດໃຈ ເກີດຂົນຫົວລຸກ ໄດ້ຢືນຢູ່ບ່ອນທີ່ສົມຄວນ

ເມື່ອແລ້ວ ທ້າວເວປະຈິດຕິຈອມອະສູນໄດ້ກ່າວກັບອະສຸລິນທະຣາຫູ ຜູ້ຢືນຢູ່ບ່ອນທີ່ສົມຄວນດ້ວຍຄາຖາ ວ່າ

ຣາຫູ ເປັນຫຍັງ? ທ່ານຈຶ່ງຟ້າວປ່ອຍສຸຣິຍະເທບພະບຸດໄປນໍ?
ເປັນຫຍັງ? ທ່ານຈຶ່ງເສົ້າສະຫຼົດໃຈ ມາຢືນຢ້ານຢູ່ນໍ
ອະສຸລິນທະຣາຫູກ່າວ ວ່າ

ຂ້າພະເຈົ້າຖືກຂັບດ້ວຍຄາຖາຂອງພຣະພຸດທະເຈົ້າ
ຫາກຂ້າພະເຈົ້າບໍ່ປ່ອຍສຸຣິຍະເທບພະບຸດ
ຫົວຂອງຂ້າພະເຈົ້າກໍຈະແຕກອອກເປັນ ๗ ສ່ຽງ
ມີຊີວິດຢູ່ກໍຈະບໍ່ໄດ້ຮັບຄວາມສຸກເລີຍ

**ສຸຣິຍະສູດທີ ໑໐ ຈົບ**

**ວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ອະນາຖະບິນດິກະວັກ

## ໝວດວ່າດ້ວຍອະນາຖະບິນດິກະເທບພະບຸດ

## ໑. ຈັນທິມະສະສູດ

### ວ່າດ້ວຍຈັນທິມະສະເທບພະບຸດ

[໘໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັນເມື່ອຣາຕີຜ່ານໄປ ຈັນທິມະສະເທບພະບຸດມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຊົນເຫຼົ່າໃດບັນລຸຊານ
ມີຈິດເປັນໜຶ່ງຜຸດຂຶ້ນ ມີປັນຍາ ມີສະຕິ

ຊົນເຫຼົ່ານັ້ນ ຈັກເຖິງຄວາມປອດໄພ
ຄືໂຕຊາຍໃນເງື້ອມພູທີ່ປາສະຈາກຮົ້ນແລະຍຸງ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊົນເຫຼົ່າໃດບັນລຸຊານ
ບໍ່ຜະໝາດ ລະກິເລດໄດ້
ຊົນເຫຼົ່ານັ້ນ ຈັກເຖິງຝັ່ງ
ຄືປາທຳລາຍຕາໜ່າງໄດ້ແລ້ວລອຍໄປ ສັນນັ້ນ

**ຈັນທິມະສະສູດທີ ໑ ຈົບ**

# ໘. ເວນທຸສູດ

## ວ່າດ້ວຍເວນທຸເທບພະບຸດ

[໗໙] ເວນທຸເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຊົນເຫຼົ່າໃດ ນັ່ງໃກ້ພຣະສຸຄົດ
ມອບຕົນໄວ້ໃນສາດສະໜາຂອງພຣະໂຄດົມ
ບໍ່ຜະໝາດ ສຶກສາຢູ່
ຊົນເຫຼົ່ານັ້ນ ເຖິງຄວາມສຸກແລ້ວຢ່າງແທ້ຈິງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ (ເວນທຸ)

ຊົນເຫຼົ່າໃດ ເປັນຜູ້ເພ່ງພິນິດ
ສຶກສາໃນບົດຄຳສອນທີ່ເຮົາກ່າວໄວ້ແລ້ວ
ຊົນເຫຼົ່ານັ້ນ ບໍ່ຜະໝາດຕະຫຼອດເວລາ
ບໍ່ເພິ່ງໄປສູ່ອຳນາດແຫ່ງມັດຈຸຣາດ

**ເວນທຸສູດທີ ໘ ຈົບ**

# ໓. ທີຄະລັດຖີສູດ

## ວ່າດ້ວຍທີຄະລັດຖີເທບພະບຸດ

[໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັນເມື່ອຣາຕີຜ່ານໄປ ທີຄະລັດຖີເທບພະບຸດມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເວລຸວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຖ້າພິກຂຸຫວັງການບັນລຸທຳທີ່ເປັນຫົວໃຈ
ມີທຳທີ່ເປັນຫົວໃຈເປັນອານິສົງ
ທ່ານເພິ່ງເປັນຜູ້ມີຊານ ມີຈິດລຸດພົ້ນ
ຮູ້ຄວາມເກີດຂຶ້ນແລະຄວາມເສື່ອມໄປແຫ່ງໂລກ
ມີໃຈດີ ບໍ່ມີຕັນຫາແລະທິດຖີອາໄສ[๑]

**ທີຄະລັດຖີສູດທີ ໓ ຈົບ**

# ໔. ນັນທະນະສູດ

## ວ່າດ້ວຍນັນທະນະເທບພະບຸດ

[໗໕] ນັນທະນະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ຂ້າແດ່ ພຣະໂຄດົມ ຜູ້ມີປັນຍາຄືແຜ່ນດິນ
ຂ້າພຣະອົງຂໍທູນຖາມພຣະອົງເຖິງຍານທັດສະນະ[໒]
ອັນບໍ່ມີສິ່ງໃດຂວາງກັ້ນຂອງພຣະຜູ້ມີພຣະພາກເຈົ້າ
ບັນດິດທັງຫຼາຍຮຽກບຸກຄົນ
ປະເພດໃດ? ວ່າເປັນຜູ້ມີສີນ
ປະເພດໃດ? ວ່າເປັນຜູ້ມີປັນຍາ

ບຸກຄົນປະເພດໃດ? ລ່ວງທຸກໄດ້
ເທວະດາທັງຫຼາຍ ບູຊາບຸກຄົນປະເພດໃດ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນໃດມີສີນ ມີປັນຍາ ອົບຮົມຕົນດີແລ້ວ
ມີຈິດຕັ້ງໝັ້ນ ຍິນດີໃນຊານ ມີສະຕິ
ລະຄວາມໂສກເສົ້າໄດ້ໝົດສິ້ນ ສິ້ນອາສະວະແລ້ວ
ເຫຼືອໄວ້ແຕ່ຮ່າງກາຍໃນຊາດສຸດທ້າຍ
ບັນດິດທັງຫຼາຍ ຮຽກບຸກຄົນປະເພດນັ້ນວ່າ
ເປັນຜູ້ມີສີນ ເປັນຜູ້ມີປັນຍາ
ບຸກຄົນປະເພດນັ້ນ ລ່ວງທຸກໄດ້ແລ້ວ
ເທວະດາທັງຫຼາຍ ບູຊາບຸກຄົນປະເພດນັ້ນ

**ນັນທະນະສູດທີ ໔ ຈົບ**

# ໕. ຈັນທະນະສູດ

## ວ່າດ້ວຍຈັນທະນະເທບພະບຸດ

[໗໓] ຈັນທະນະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ບຸກຄົນຜູ້ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ຈະຂ້າມໂອຄະໄດ້ແນວໃດ?
ໃຜບໍ່ຈົມໃນແມ່ນ້ຳເລິກເຊິ່ງບໍ່ມີບ່ອນເພິ່ງ ບໍ່ມີບ່ອນຢຶດໜ່ຽວ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນຜູ້ສົມບູນດ້ວຍສີນ ມີປັນຍາ
ມີຈິດຕັ້ງໝັ້ນດີ ພາຣົບຄວາມພຽນ
ອຸທິດກາຍແລະໃຈຢູ່ຕະຫຼອດເວລາ
ຍ່ອມຂ້າມໂອຄະທີ່ຂ້າມໄດ້ຍາກ
ເຂົາເວັ້ນຂາດແລ້ວຈາກກາມສັນຍາ ລ່ວງຮູບສັງໂຍດໄດ້

มีຄວາມກຳໜັດດ້ວຍຄວາມເພີດເພີນໝົດແລ້ວ
ຍ່ອມບໍ່ຈົມໃນແມ່ນ້ຳເລິກ

**ຈັນທະນະສູດທີ ๕ ຈົບ**

## ๖. ວາສຸທັດຕະສູດ

### ວ່າດ້ວຍວາສຸທັດຕະເທບພະບຸດ

[๗๓] ວາສຸທັດຕະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພິກຂຸເພິ່ງຢູ່ຢ່າງມີສະຕິ ເພື່ອລະກາມຣາຄະ
ຄືບຸກຄົນຖືກແທງດ້ວຍຫອກ ມຸ້ງຖອດຫອກອອກ
ຄືບຸກຄົນຖືກໄຟໄໝ້ຢູ່ເທິງຫົວ ມຸ້ງຈະດັບໄຟ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພິກຂຸເພິ່ງຢູ່ຢ່າງມີສະຕິ ເພື່ອລະສັກກາຍະທິດຖິ
ຄືບຸກຄົນຖືກແທງດ້ວຍຫອກ ມຸ້ງຖອດຫອກອອກ
ຄືບຸກຄົນຖືກໄຟໄໝ້ຢູ່ເທິງຫົວ ມຸ້ງດັບໄຟ ສັນນັ້ນ

**ວາສຸທັດຕະສູດທີ ๖ ຈົບ**

## ๗. ສຸພົມສູດ

### ວ່າດ້ວຍສຸພົມເທບພະບຸດ

[๗๔] ສຸພົມເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖານີ້ ວ່າ

ຈິດນີ້ສະດຸ້ງຢູ່ປະຈຳ ໃຈນີ້ຫວາດສຽວຢູ່ປະຈຳ
ເມື່ອກິດທັງຫຼາຍ ຍັງບໍ່ເກີດຂຶ້ນກໍດີ ເກີດຂຶ້ນແລ້ວກໍດີ
ຖ້າຄວາມບໍ່ສະດຸ້ງຢ້ານມີຢູ່
ພຣະອົງຜູ້ທີ່ຂ້າພຣະອົງທູນຖາມແລ້ວ
ຂໍຈົ່ງຕັດບອກຂໍ້ຄວາມນັ້ນແກ່ຂ້າພຣະອົງດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ນອກຈາກປັນຍາເຄື່ອງຕັດສະຣູ້ ຄວາມພຽນເຄື່ອງເຜົາກິເລດ
ຄວາມສັງລວມອິນຊີ ແລະການສະລະທຸກສິ່ງທຸກຢ່າງ
ເຮົາຍັງບໍ່ເຫັນຄວາມໂດຍປອດໄພແຫ່ງສັດທັງຫຼາຍເລີຍ

ສຸພິມເທບພະບຸດໄດ້ຂາບທູນດັ່ງນີ້ແລ້ວ ຯລຯ ຫາຍໂຕໄປໃນບ່ອນນັ້ນເອງ

**ສຸພິມສູດທີ ໗ ຈົບ**

## ໘. ກະກຸທະສູດ

### ວ່າດ້ວຍກະກຸທະເທບພະບຸດ

[໙໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະອັນຊະນະວັນ ສະຖານທີ່ພຣະຣາດຊະທານອະໄພແກ່ໝູ່ເນື້ອ ເຂດເມືອງສາເກດ ຄັນເມື່ອຣາຕີຜ່ານໄປ ກະກຸທະເທບພະບຸດມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະອັນຊະນະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະສະມະນະ ພຣະອົງຊົງຍິນດີຢູ່ບໍ?
ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ອາວຸໂສ ເຮົາຈັກໄດ້ອັນໃດນໍ?
ຂ້າແດ່ ພຣະສະມະນະ ຖ້າເປັນແນວນັ້ນ ພຣະອົງຊົງເສົ້າໂສກຢູ່ບໍ?
ອາວຸໂສ ເຮົາເສື່ອມເສຍອັນ ໃດນໍ?
ຂ້າແດ່ ພຣະສະມະນະ ຖ້າເປັນແນວນັ້ນ ພຣະອົງບໍ່ຊົງຍິນດີ ບໍ່ຊົງເສົ້າໂສກເລີຍບໍ?
ເປັນເຊັ່ນນັ້ນ ອາວຸໂສ

ກະກຸທະເທບພະບຸດຂາບທູນ ວ່າ

ຂ້າແດ່ ພຣະອົງຜູ້ເປັນພິກຂຸ
ພຣະອົງບໍ່ຊົງມີຄວາມທຸກແດ່ບໍ?
ບໍ່ຊົງມີຄວາມເພີດເພີນແດ່ບໍ?
ຄວາມບໍ່ຍິນດີບໍ່ຄອບງຳພຣະອົງຜູ້ຢູ່ຜູ້ດຽວບໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຍັກ ເຮົາບໍ່ມີຄວາມທຸກແລະຄວາມເພີດເພີນ
ອັນໜຶ່ງ ຄວາມບໍ່ຍິນດີກໍບໍ່ຄອບງຳເຮົາຜູ້ຢູ່ຜູ້ດຽວ

ກະກຸທະເທບພະບຸດຂາບທູນ ວ່າ

ຂ້າແດ່ ພຣະອົງຜູ້ເປັນພິກຂຸ
ເປັນຫຍັງ? ພຣະອົງຈຶ່ງບໍ່ມີຄວາມທຸກ ບໍ່ມີຄວາມເພີດເພີນ
ເປັນຫຍັງ? ຄວາມບໍ່ຍິນດີຈຶ່ງບໍ່ຄອບງຳພຣະອົງຜູ້ຢູ່ຜູ້ດຽວ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຜູ້ມີຄວາມທຸກທີ່ນັ້ນຈຶ່ງມີຄວາມເພີດເພີນ
ຜູ້ມີຄວາມເພີດເພີນທີ່ນັ້ນຈຶ່ງມີຄວາມທຸກ
(ສ່ວນ) ພິກຂຸເປັນຜູ້ບໍ່ມີຄວາມເພີດເພີນ ເປັນຜູ້ບໍ່ມີຄວາມທຸກ
ທ່ານຈົ່ງຮູ້ແນວນີ້ເທີ້ນ ອາວຸໂສ

ກະກຸທະເທບພະບຸດຂາບທູນ ວ່າ

ດົນແທ້ນໍ ຂ້າພຣະອົງຈຶ່ງໄດ້ພົບເຫັນພິກຂຸ
ຜູ້ເປັນພາມ ຜູ້ດັບເຢັນແລ້ວ ບໍ່ມີຄວາມເພີດເພີນ
ບໍ່ມີຄວາມທຸກ ຜູ້ຂ້າມພົ້ນເຄື່ອງຂ້ອງໃນໂລກໄດ້ແລ້ວ

**ກະກຸທະສູດທີ ๗ ຈົບ**

## ໘. ອຸດຕະຣະສູດ

### ວ່າດ້ວຍອຸດຕະຣະເທບພະບຸດ

[໑໐໐] ເລື້ອງເກີດຂຶ້ນທີ່ນະຄອນຣາດຊະຄຶ

ອຸດຕະຣະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຊີວິດຖືກຊະຣານຳເຂົ້າໄປ ອາຍຸຈຶ່ງສັ້ນ
ຜູ້ທີ່ຖືກຊະຣານຳເຂົ້າໄປແລ້ວ ບໍ່ມີເຄື່ອງຕ້ານທານ

ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນທຳບຸນທີ່ນຳຄວາມສຸກມາໃຫ້[໑]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊີວິດຖືກຊະຣານຳເຂົ້າໄປ ອາຍຸຈຶ່ງສັ້ນ
ຜູ້ທີ່ຖືກຊະຣານຳເຂົ້າໄປແລ້ວ ບໍ່ມີເຄື່ອງຕ້ານທານ
ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນລະໂລກາມິດ ມຸ້ງສູ່ສັນຕິເທີ້ນ[໒]

**ອຸດຕະຣະສູດທີ ໙ ຈົບ**

# ໑໐. ອະນາຖະປິນຖິກະສູດ

## ວ່າດ້ວຍອະນາຖະບິນດິກະເທບພະບຸດ

[໑໐໑] ອະນາຖະບິນດິກະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພຣະເຊຕະວັນນີ້ນັ້ນມີໝູ່ລືສີອາໄສຢູ່
ພຣະຜູ້ເປັນທຳມະຣາຊາກໍປະທັບຢູ່
ເປັນສະຖານທີ່ໃຫ້ເກີດປີຕິແກ່ຂ້າພຣະອົງ
ການງານ ໑ ວິດຊາ ໑ ທຳ ໑ ສີນ ໑ ຊີວິດອັນສູງສຸດ ໑
ສັດທັງຫຼາຍຍ່ອມບໍລິສຸດດ້ວຍທຳ ໕ ປະການນີ້
ບໍ່ແມ່ນບໍລິສຸດດ້ວຍໂຄດຫຼືດ້ວຍຊັບ
ຍ້ອນເຫດນັ້ນແລ ຄົນສະຫຼາດເມື່ອເຫັນປະໂຫຍດຕົນ
ຄວນຄັດເລືອກທຳໂດຍແຍບຄາຍເທີ້ນ
ຍ້ອນເມື່ອຄັດເລືອກແນວນີ້ ຍ່ອມມີດຈິດໄດ້ໃນທຳເຫຼົ່ານັ້ນ

ພຣະສາຣີບຸດທໍ່ນັ້ນ ເປັນຜູ້ປະເສີດກວ່າພິກຂຸຜູ້ເຖິງຝັ່ງ
ດ້ວຍປັນຍາ ສີນ ແລະ ຄວາມສະງົບ[໑]

ອະນາຖະບິນດິກະເທບພະບຸດໄດ້ຂາບທູນດັ່ງນີ້ແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ເມື່ອຣາຕີນັ້ນລ່ວງໄປແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ເມື່ອຄືນນີ້ເທບພະບຸດອົງໜຶ່ງມີວັນນະງົດງາມຢ່າງຍິ່ງ ເມື່ອຣາຕີຜ່ານໄປ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າມາຫາເຮົາຮອດບ່ອນຢູ່ ອະພິວາດເຮົາແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງເຮົາ ວ່າ

ພຣະເຊຕະວັນນີ້ນັ້ນມີໝູ່ລືສີອາໄສຢູ່
ພຣະຜູ້ເປັນທຳມະຣາຊາກໍປະທັບຢູ່
ເປັນສະຖານທີ່ໃຫ້ເກີດປີຕິແກ່ຂ້າພຣະອົງ
ການງານ ໑ ວິດຊາ ໑ ທຳ ໑ ສີນ ໑ ຊີວິດອັນສູງສຸດ ໑
ສັດທັງຫຼາຍຍ່ອມບໍລິສຸດດ້ວຍທຳ ໕ ປະການນີ້
ຫາແມ່ນບໍລິສຸດດ້ວຍໂຄດຫຼືດ້ວຍຊັບບໍ່
ຍ້ອນເຫດນັ້ນແຫລະ ຄົນສະຫຼາດເມື່ອເຫັນປະໂຫຍດຕົນ
ຄວນຄັດເລືອກທຳໂດຍແຍບຄາຍເທີ້ນ
ຍ້ອນເມື່ອຄັດເລືອກແນວນີ້ ຍ່ອມມົດຈົດໄດ້ໃນທຳເຫຼົ່ານັ້ນ

ພຣະສາຣີບຸດທໍ່ນັ້ນເປັນຜູ້ປະເສີດກວ່າພິກຂຸຜູ້ເຖິງຝັ່ງ
ດ້ວຍປັນຍາ ສີນ ແລະຄວາມສະງົບ

ພິກຂຸທັງຫຼາຍ ເທບພະບຸດນັ້ນໄດ້ກ່າວດັ່ງນີ້ ອະພິວາດເຮົາ ກະທຳປະທັກຂິນແລ້ວ ຫາຍໂຕໄປໃນບ່ອນນັ້ນເອງ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍເທບພະບຸດນັ້ນ ເຫັນຈະເປັນອະນາຖະບິນທິກະເທບພະບຸດແນ່ນອນ ອະນາຖະບິນທິກະຄະຫະບໍດີໄດ້ເຫຼື້ອມໃສຍິ່ງໃນທ່ານພຣະສາຣີບຸດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ດີແລ້ວ ດີແລ້ວ ອານົນ ທ່ານຄິດຖືກແລ້ວ ເທບພະບຸດນັ້ນ ຄືອະນາຖະບິນດິກະເສດຖີນັ້ນເອງ

**ອະນາຖະປິນຖິກະສູດທີ ໑໐ ຈົບ**

**ອະນາຖະບິນດິກະວັກທີ ໘ ຈົບ**

### ລວມພຣະສູດທີ ມີໃນວັກນີ້ ຄື



# ໒. ນານາຕິດຖິຍະວັກ

## ໝວດວ່າດ້ວຍເທບພະບຸດຜູ້ເປັນສາວົກຂອງເດຍຣະຖີຕ່າງ ໆ

## ໑. ສິວະສູດ

### ວ່າດ້ວຍສິວະເທບພະບຸດ

[໑໐໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັນເມື່ອຣາຕີຜ່ານໄປ ສິວະເທບພະບຸດມີວັນນະງົດງາມຢ່າງຍິ່ງເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທໍ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມເປັນຜູ້ປະເສີດ ບໍ່ເປັນຜູ້ຕົກຕ່ຳ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທໍ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວຍ່ອມໄດ້ປັນຍາ
ບໍ່ແມ່ນໄດ້ປັນຍາຈາກຄົນອັນທະພານອື່ນ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມບໍ່ເສົ້າໂສກໃນທ່າມກາງຄົນຜູ້ເສົ້າໂສກ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມຮຸ່ງເຮືອງໃນທ່າມກາງແຫ່ງຍາດ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ສັດທັງຫຼາຍ ຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ ຍ່ອມໄປສູ່ສຸຄະຕິ

ບຸກຄົນ ຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ສັດທັງຫຼາຍຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມດຳລົງຢູ່ໄດ້ຕະຫຼອດໄປ໌

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບສິວະເທບພະບຸດດ້ວຍຄາຖາ ວ່າ

ບຸກຄົນຄວນສະມາຄົມກັບພວກສັດຕະບຸຣຸດທີ່ນັ້ນ
ຄວນທຳຄວາມສະໜິດສະໜົມກັບພວກສັດຕະບຸຣຸດ
ບຸກຄົນຮູ້ແຈ້ງສັດທຳຂອງພວກສັດຕະບຸຣຸດແລ້ວ
ຍ່ອມລຸດພົ້ນຈາກທຸກທັງປວງ

**ສິວະສູດທີ ໑ ຈົບ**

# ໘. ເຂມະສູດ

## ວ່າດ້ວຍເຂມະເທບພະບຸດ

[໑໐໓] ເຂມະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຄົນພານຜູ້ມີປັນຍາຊາມປະພຶດຕົນເປັນຄືສັດຕູ
ຍ່ອມເຮັດກຳອັນລາມົກເຊິ່ງໃຫ້ຜົນເຜັດຮ້ອນ
ບຸກຄົນເຮັດກຳໃດ? ແລ້ວຍ່ອມເດືອດຮ້ອນໃນພາຍຫຼັງ
ແລະມີໜ້ານອງດ້ວຍນ້ຳຕາ ຮ້ອງໄຫ້ຢູ່ ໄດ້ຮັບຜົນກຳໃດ?
ກຳທີ່ເຮັດແລ້ວນັ້ນເປັນກຳບໍ່ດີ

ບຸກຄົນເຮັດກຳໃດ? ແລ້ວບໍ່ເດືອດຮ້ອນໃນພາຍຫຼັງ
ມີຈິດໃຈແຊ່ມຊື່ນເບີກບານໄດ້ຮັບຜົນກຳໃດ?
ກຳທີ່ເຮັດແລ້ວນັ້ນເປັນກຳດີ
ບຸກຄົນຮູ້ວ່າກຳໃດ? ເປັນປະໂຫຍດແກ່ຕົນ
ຄວນຟ້າວລົງມືທຳກຳນັ້ນທັນທີ

ຢ່າພະຍາຍາມເປັນນັກປາດເຈົ້າຄວາມຄິດ
ດ້ວຍຄວາມຄິດຄືພໍ່ຄ້າກວຽນເລີຍ
ພໍ່ຄ້າກວຽນຫຼີບຫົນທາງສາຍໃຫຍ່ທີ່ບໍ່ກັນດານ
ໃຊ້ຫົນທາງທີ່ກັນດານ ຈົນເພົາກວຽນຫັກ ຈຸກເຈົ່າຢູ່ ສັນໃດ
ບຸກຄົນຫຼີກຈາກທຳ ປະພຶດຕາມອະທັມ ກໍສັນນັ້ນ
ເປັນຄົນຈ໊າ ດຳເນີນໄປສູ່ທາງແຫ່ງຄວາມຕາຍ ຈຸກເຈົ່າຢູ່
ຄືພໍ່ຄ້າກວຽນມີເພົາກວຽນຫັກແລ້ວ ສັນນັ້ນ

**ເຂມະສູດທີ ໘ ຈົບ**

# ໙. ເສຣີສູດ

## ວ່າດ້ວຍເສຣີເທບພະບຸດ

[໑໐໘] ເສຣີເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ເທວະດາແລະມະນຸດທັງສອງພວກ
ຕ່າງກໍພໍໃຈເຂົ້ານຳກັນທັງນັ້ນ
ສ່ວນຜູ້ທີ່ບໍ່ພໍໃຈເຂົ້າ ຊື່ວ່າຍັກໂດຍແທ້[໑]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊົນເຫຼົ່າໃດມີໃຈເຫຼື້ອມໃສໃຫ້ເຂົ້ານັ້ນດ້ວຍສັດທາ
ເຂົ້ານັ້ນ ເອງຍ່ອມຄ້ຳຊູຊົນເຫຼົ່ານັ້ນທັງໃນໂລກນີ້ແລະໂລກໜ້າ
ຍ້ອນເຫດນັ້ນ ບຸກຄົນເພິ່ງກຳຈັດຄວາມຂີ້ຖີ່
ຄອບງຳມົນທິນແລ້ວໃຫ້ທານເທີ້ນ
ຍ້ອນບຸນເປັນທີ່ເພິ່ງຂອງສັດທັງຫຼາຍໃນໂລກໜ້າ

ເສຣີເທບພະບຸດຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຢ່າງຍິ່ງ ວ່າ

ຊົນເຫຼົ່າໃດມີໃຈເຫຼື້ອມໃສ ໃຫ້ເຂົ້ານັ້ນດ້ວຍສັດທາ
ເຂົ້ານັ້ນ ເອງຍ່ອມຄ້ຳຊູຊົນເຫຼົ່ານັ້ນທັງໃນໂລກນີ້ແລະໂລກໜ້າ
ຍ້ອນເຫດນັ້ນ ບຸກຄົນເພິ່ງກຳຈັດຄວາມຂີ້ຖີ່
ຄອບງຳມົນທິນແລ້ວໃຫ້ທານເທີ້ນ
ຍ້ອນບຸນເປັນທີ່ເພິ່ງຂອງສັດທັງຫຼາຍໃນໂລກໜ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງເຄີຍມີມາແລ້ວ ຂ້າພຣະອົງໄດ້ເປັນພຣະເຈົ້າແຜ່ນດິນ ມີນາມວ່າເສຣີ ເປັນທາຍົກ ເປັນທານະບໍດີ ເປັນຜູ້ກ່າວຊົມຄຸນແຫ່ງທານ ຂ້າພຣະອົງໄດ້ໃຫ້ທານ ແກ່ສະມະນະພາມ ຄົນກຳພ້າ ຄົນເດີນທາງໄກ ວະນິພົກແລະຍາຈົກທັງຫຼາຍ ຢູ່ທີ່ປະຕູທັງ ໔ ດ້ານ ເມື່ອຕໍ່ມາພວກຝ່າຍໃນພາກັນເຂົ້າໄປຫາຂ້າພຣະອົງແລ້ວ ໄດ້ກ່າວ ດັ່ງນີ້ວ່າ ພຣະອົງຊົງ ໃຫ້ທານ ແຕ່ພວກຂ້ານ້ອຍບໍ່ໄດ້ໃຫ້ທານເລີຍ ເປັນການດີທີ່ພວກຂ້ານ້ອຍຈະໄດ້ອາໄສພຣະອົງ ໃຫ້ທານແລະທຳບຸນແດ່ ຂ້າພຣະອົງ ໄດ້ມີຄວາມຄິດດັ່ງນີ້ວ່າ ເຮົາເອງເປັນທາຍົກ ເປັນທານະບໍ ດີ ເປັນຜູ້ກ່າວຊົມຄຸນແຫ່ງທານ ເມື່ອມີຜູ້ເວົ້າວ່າ ພວກຂ້ານ້ອຍຈະໃຫ້ທານເຮົາຈະວ່າອັນໃດໄດ້ ຂ້າພຣະອົງຈຶ່ງມອບ ປະຕູດ້ານທີ ໑ ໃຫ້ພວກຝ່າຍໃນໄປ ພວກຝ່າຍໃນກໍພາກັນໃຫ້ທານທີ່ປະຕູ ນັ້ນ ທານຂອງຂ້າພຣະອົງຈຶ່ງລຸດໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຕໍ່ມາພວກກະສັດພາກັນເຂົ້າໄປຫາຂ້າພຣະອົງໄດ້ຕັດ ດັ່ງນີ້ວ່າ ພຣະອົງຊົງໃຫ້ທານ ພວກຝ່າຍໃນກໍໃຫ້ທານ ພວກຂ້ານ້ອຍບໍ່ໄດ້ໃຫ້ທານ ເປັນການດີທີ່ ພວກຂ້ານ້ອຍຈະໄດ້ອາໄສພຣະອົງ ໃຫ້ທານແລະທຳບຸນແດ່ຂ້າພຣະອົງໄດ້ມີຄວາມຄິດດັ່ງນີ້ວ່າ ເຮົາເອງກໍເປັນທາຍົກ ເປັນທານະບໍດີ ເປັນຜູ້ກ່າວຊົມ ຄຸນແຫ່ງທານ ເມື່ອມີຜູ້ເວົ້າວ່າ ພວກຂ້າ ນ້ອຍຈະໃຫ້ທານເຮົາຈະວ່າອັນໃດໄດ້ຂ້າພຣະອົງຈຶ່ງມອບປະຕູດ້ານທີ ໔ ໃຫ້ແກ່ພວກກະສັດໄປ ພວກກະສັດກໍພາກັນໃຫ້ທານທີ່ປະຕູນັ້ນ ທານຂອງຂ້າພຣະອົງຈຶ່ງລຸດໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຕໍ່ມາພວກພົນນິກາຍ (ຂ້າຣາດຊະການຝ່າຍທະຫານ) ເຂົ້າໄປຫາຂ້າພຣະອົງໄດ້ກ່າວດັ່ງນີ້ວ່າ ພຣະອົງກໍຊົງໃຫ້ທານ ພວກຝ່າຍໃນກໍໃຫ້ທານ ພວກ

ກະສັດກໍຊົງໃຫ້ທານ ພວກຂ້ານ້ອຍບໍ່ໄດ້ໃຫ້ທານ ເປັນການດີທີ່ພວກຂ້ານ້ອຍຈະໄດ້ອາໄສພຣະອົງໃຫ້ທານ ແລະ ທຳບຸນແດ່ ຂ້າພຣະອົງໄດ້ມີຄວາມຄິດ ດັ່ງນີ້ວ່າ ເຮົາເອງກໍເປັນທາຍົກ ເປັນທານະບໍດີ ເປັນຜູ້ກ່າວຊົມຄຸນແຫ່ງທານ ເມື່ອມີຜູ້ເວົ້າວ່າ ພວກຂ້ານ້ອຍຈະໃຫ້ທານເຮົາຈະວ່າອັນໃດໄດ້ຂ້າພຣະອົງ ຈຶ່ງມອບປະຕູດ້ານທີ ໓ ໃຫ້ພວກ ພົນນິກາຍໄປ ພວກພົນນິກາຍກໍພາກັນໃຫ້ທານທີ່ປະຕູນັ້ນ ທານຂອງຂ້າພຣະອົງຈຶ່ງລຸດໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຕໍ່ມາມີພວກພາມມະນະຄະຫະບໍດີເຂົ້າໄປຫາຂ້າພຣະອົງໄດ້ກ່າວດັ່ງນີ້ວ່າ ພຣະອົງກໍຊົງໃຫ້ທານ ພວກຝ່າຍໃນກໍໃຫ້ທານ ພວກກະສັດກໍຊົງໃຫ້ທານພວກພົນນິກາຍກໍໃຫ້ທານ ແຕ່ພວກຂ້ານ້ອຍບໍ່ໄດ້ໃຫ້ທານ ເປັນການດີທີ່ພວກ ຂ້ານ້ອຍຈະໄດ້ອາໄສພຣະອົງໃຫ້ທານແລະທຳບຸນແດ່ ຂ້າພຣະອົງ ໄດ້ມີຄວາມຄິດດັ່ງນີ້ວ່າ ເຮົາເອງກໍເປັນທາຍົກເປັນທານະບໍດີ ເປັນຜູ້ກ່າວຊົມຄຸນແຫ່ງທານເມື່ອມີຜູ້ເວົ້າວ່າ ພວກຂ້ານ້ອຍຈະໃຫ້ທານເຮົາຈະວ່າອັນໃດໄດ້ຂ້າພຣະອົງຈຶ່ງມອບປະຕູດ້ານທີ ໔ ໃຫ້ພວກພາມມະນະຄະຫະບໍດີໄປ ພວກພາມມະນະຄະຫະບໍດີກໍພາກັນໃຫ້ທານທີ່ປະຕູນັ້ນ ທານຂອງຂ້າພຣະອົງຈຶ່ງລຸດໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ພວກບຸຣຸດທັງຫຼາຍຕ່າງພາກັນໄປຫາຂ້າພຣະອົງ ໄດ້ກ່າວດັ່ງນີ້ວ່າ ບັດນີ້ພຣະອົງຈະບໍ່ຊົງໃຫ້ທານໃນບ່ອນໃດອີກບໍ? ເມື່ອເຂົາກ່າວແນວນີ້ ຂ້າພຣະອົງໄດ້ກ່າວກັບບຸຣຸດເຫຼົ່ານັ້ນດັ່ງນີ້ວ່າ ທ່ານທັງຫຼາຍ ຖ້າເປັນແນວນັ້ນ ໃນຊົນນະບົດພາຍນອກ ບ່ອນໃດມີລາຍໄດ້ດີເກີດຂຶ້ນ ພວກທ່ານຈົ່ງຮີບໂຮມສົ່ງເຂົ້າໄປໃນວັງເຄິ່ງໜຶ່ງ ອີກເຄິ່ງໜຶ່ງ ພວກທ່ານຈົ່ງໃຫ້ທານແກ່ສະມະນະພາມ ຄົນກຳພ້າ ຄົນເດີນທາງໄກ ວະນິພົກແລະຍາຈົກທັງຫຼາຍ ໃນຊົນນະບົດນັ້ນເທີ້ນ ຂ້າພຣະອົງຈຶ່ງຍັງບໍ່ເຖິງທີ່ສຸດແຫ່ງບຸນທີ່ໄດ້ເຮັດໄວ້ຕະຫຼອດການລະນານ ແນວນີ້ (ທີ່ສຸດ) ແຫ່ງກຸສົນທຳທີ່ໄດ້ເຮັດໄວ້ຕະຫຼອດການລະນານແນວນີ້ ວ່າ ບຸນທໍ່ນີ້ (ພໍແລ້ວ) ວ່າ ຜົນຂອງບຸນທໍ່ນີ້ (ພໍແລ້ວ) ຫຼື ວ່າ ບຸນທໍ່ນີ້ (ພໍແລ້ວ) ທີ່ເຮົາເພິ່ງດຳລົງຢູ່ໃນສະຫວັນໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຢ່າງຍິ່ງວ່າ

ຊົນເຫຼົ່າໃດມີໃຈເຫຼື້ອມໃສ ໃຫ້ເຂົ້ານັ້ນດ້ວຍສັດທາ
ເຂົ້ານັ້ນເອງຍ່ອມຄ້ຳຊູຊົນເຫຼົ່ານັ້ນທັງໃນໂລກນີ້ແລະໂລກໜ້າ
ຍ້ອນເຫດນັ້ນ ບຸກຄົນເພິ່ງກຳຈັດຄວາມຂີ້ຖີ່
ຄອບງຳມົນທິນແລ້ວໃຫ້ທານເທີ້ນ
ຍ້ອນບຸນເປັນທີ່ເພິ່ງຂອງສັດທັງຫຼາຍໃນໂລກໜ້າ

**ເສຣີສູດທີ ໓ ຈົບ**

# ໔. ຄະຕິກາຣະສູດ

## ວ່າດ້ວຍຄະຕິກາຣະເທບພະບຸດ

[໑໐໔] ຄະຕິກາຣະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພິກຂຸ ໗ ອົງ ຜູ້ບັງເກີດໃນພົມມະໂລກຊັ້ນອະວິຫາ
ເປັນຜູ້ລຸດພົ້ນ ສິ້ນຣາຄະແລະໂທສະແລ້ວ
ຂ້າມພົ້ນຕັນຫາທີ່ຊ່ານໄປໃນໂລກໄດ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພິກຂຸເຫຼົ່ານັ້ນ ຄືໃຜແດ່
ໄດ້ຂ້າມພົ້ນເປືອກຕົມ ຄືບ້ວງຄວາມຕາຍ
ທີ່ໃຜ ໆ ຂ້າມໄດ້ແສນຍາກ
ລະຖິ້ມກາຍມະນຸດແລ້ວກ້າວລ່ວງໂຍຄະອັນເປັນທິບໄດ້

ຄະຕິກາຣະເທບພະບຸດຂາບທູນ ວ່າ

ພິກຂຸ ໓ ອົງເຫຼົ່ານີ້ ຄື ທ່ານອຸປະກະ
ທ່ານຜະລະຄັນດະ ແລະທ່ານປຸກກຸສາຕິ
ພິກຂຸອີກ ໔ ອົງ ຄື ທ່ານພັດທິຍະ ທ່ານຂັນທະເທວະ
ທ່ານພະຫຸທັນຕິ ແລະ ທ່ານສິງຄິຍະ
ພິກຂຸເຫຼົ່ານັ້ນ ລະຖິ້ມກາຍມະນຸດແລ້ວ
ກ້າວລ່ວງໂຍຄະອັນເປັນທິບໄດ້

ພຣະຜູ້ມີພຣະພາກເຈົ້າຕັດຖາມ ວ່າ

ທ່ານຜູ້ສະຫຼາດມັກກ່າວສັນເສີນພິກຂຸເຫຼົ່ານັ້ນ
ຜູ້ລະບ້ວງມານໄດ້ແລ້ວ
ພິກຂຸເຫຼົ່ານັ້ນ ຮູ້ທຳຂອງໃຜນໍ?
ຈຶ່ງຕັດເຄື່ອງມັດຄືພົບໄດ້

ຄະຕິກາຣະເທບພະບຸດທູນຕອບ ວ່າ

ທ່ານເຫຼົ່ານັ້ນ ຮູ້ທຳຂອງຜູ້ໃດ?
ຈຶ່ງຕັດເຄື່ອງມັດຄືພົບໄດ້
ຜູ້ນັ້ນບໍ່ແມ່ນຄົນອື່ນນອກຈາກພຣະຜູ້ມີພຣະພາກເຈົ້າ
(ແລະ) ນອກຈາກຄຳສັ່ງສອນຂອງພຣະອົງ
ທ່ານເຫຼົ່ານັ້ນ ຮູ້ທຳເປັນທີ່ດັບບໍ່ເຫຼືອແຫ່ງນາມຮູບແລ້ວ
ຈຶ່ງຕັດເຄື່ອງມັດຄືພົບໄດ້

ພຣະຜູ້ມີພຣະພາກເຈົ້າຕັດຖາມ ວ່າ

ທ່ານກ່າວວາຈາເລິກເຊິ່ງ
ທີ່ຮູ້ໄດ້ຍາກ ເຂົ້າໃຈໃຫ້ດີໄດ້ຍາກ
ທ່ານຮູ້ທຳຂອງໃຜ? ຈຶ່ງກ່າວວາຈາແນວນີ້ໄດ້

ຄະຕິກາຣະເທບພະບຸດທູນຕອບ ວ່າ

ແຕ່ກ່ອນຂ້າພຣະອົງເປັນຊ່າງໝໍ້
ປັ້ນໝໍ້ຢູ່ໃນແຄວັ້ນເວພະລິງຄະ ເປັນຜູ້ລ້ຽງເບິ່ງມານດາແລະບິດາ
ເປັນອຸປາສົກຂອງພຣະກັດສະປະພຸດທະເຈົ້າ ເວັ້ນຂາດຈາກເມຖຸນທຳ
ປະພຶດພົມມະຈັນ ບໍ່ມີອາມິດ
ໄດ້ເຄີຍເປັນຄົນໝູ່ບ້ານດຽວກັນກັບພຣະອົງ
ທັງເຄີຍເປັນສະຫາຍຂອງພຣະອົງໃນການກ່ອນ
ຂ້າພຣະອົງຮູ້ຈັກພິກຂຸ ໗ ອົງເຫຼົ່ານີ້
ຜູ້ລຸດພົ້ນແລ້ວ ສິ້ນຣາຄະແລະໂທສະແລ້ວ
ຂ້າມພົ້ນຕັນຫາທີ່ຊ່ານໄປໃນໂລກໄດ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ນາຍຊ່າງໝໍ້ ແມ່ນແທ້ຄືທີ່ທ່ານເວົ້ານັ້ນແລ້ວ
ແຕ່ກ່ອນນັ້ນທ່ານເຄີຍເປັນຊ່າງໝໍ້
ປັ້ນໝໍ້ຢູ່ໃນແຄວັ້ນເວພະລິງຄະ ເປັນຜູ້ລ້ຽງເບິ່ງມານດາແລະບິດາ
ເປັນອຸປາສົກຂອງພຣະກັດສະປະພຸດທະເຈົ້າ ເວັ້ນຂາດຈາກເມຖຸນທຳ
ປະພຶດພົມມະຈັນ ບໍ່ມີອາມິດ
ໄດ້ເຄີຍເປັນຄົນໝູ່ບ້ານດຽວກັນກັບເຮົາ
ທັງເຄີຍເປັນສະຫາຍຂອງເຮົາໃນການກ່ອນ

ພຣະສັງຄີຕິກາຈານກ່າວວ່າ

ສະຫາຍເກົ່າທັງສອງ ຜູ້ເຄີຍອົບຮົມຕົນມາແລ້ວ
ເຫຼືອໄວ້ແຕ່ຮ່າງກາຍໃນຊາດສຸດທ້າຍ
ໄດ້ມາພົບກັນດ້ວຍອາການແນວນີ້ໆ

**ຄະຕິກາຣະສູດທີ ໔ ຈົບ**

# ໕. ຊັນຕຸສູດ

## ວ່າດ້ວຍຊັນຕຸເທບພະບຸດ

[໑໐໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພິກຂຸຈຳນວນຫຼາຍຢູ່ໃນກຸຕິປ່າ ຂ້າງພູຫິມະພານ ແຄວັນໂກສົນ ເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າພ່ຳເພື່ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ

ເມື່ອໃນມື້ອຸໂປສົດ ໑໕ ຄ່ຳ ຊັນຕຸເທບພະບຸດເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ໄດ້ກ່າວກັບພິກຂຸເຫຼົ່ານັ້ນ ດ້ວຍຄາຖາທັງຫຼາຍ ວ່າ

ໃນການກ່ອນ ພວກພິກຂຸສາວົກຂອງພຣະໂຄດົມ
ເປັນຢູ່ງ່າຍ ບໍ່ມັກຫຼາຍໃນການສະແຫວງຫາບິນທະບາດ
ບໍ່ມັກຫຼາຍໃນບ່ອນນອນບ່ອນນັ່ງ
ທ່ານຮູ້ວ່າສິ່ງທັງປວງໃນໂລກເປັນຂອງບໍ່ທ່ຽງ
ຈຶ່ງທຳທີ່ສຸດແຫ່ງທຸກໄດ້

ສ່ວນທ່ານເຫຼົ່ານີ້ ເຮັດຕົນເປັນຄົນລ້ຽງຍາກ
ກິນ ໆ ແລ້ວກໍນອນຄືຄົນທີ່ໂກງຊາວບ້ານ
ໝົກມຸ້ນຢູ່ໃນເຮືອນຂອງຄົນອື່ນ
ຂ້າພະເຈົ້າທຳອັນຊະລີຕໍ່ສົງແລ້ວ
ຂໍເວົ້າກັບທ່ານລາງພວກໃນບ່ອນນີ້ວ່າ
ພວກທ່ານຖືກເຂົາປະຖິ້ມແລ້ວ ເປັນຄົນອະນາຖາຄືເຜດ

ຂ້າພະເຈົ້າກ່າວໝາຍເອົາບຸກຄົນພວກທີ່ຜະໝາດຢູ່

ສ່ວນທ່ານເຫຼົ່າໃດບໍ່ຜະໝາດ
ຂ້າພະເຈົ້າຂໍນອບນ້ອມແດ່ທ່ານເຫຼົ່ານັ້ນ[๑]

**ຂັນຕຸສູດທີ ໕ ຈົບ**

# ໖. ໂຣຫິຕັດສະສູດ

## ວ່າດ້ວຍໂຣຫິຕັດສະເທບພະບຸດ

[໑໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ໂຣຫິຕັດສະເທບພະບຸດຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງສາມາດບໍ່ນໍທີ່ຈະຊົງຮູ້ ຊົງເຫັນ ຫຼື ຊົງເຖິງບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດດ້ວຍການໄປ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້ດ້ວຍການໄປ

ໂຣຫິຕັດສະເທບພະບຸດຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຢ່າງຍິ່ງວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດ ແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້ດ້ວຍການໄປ

ຂ້າແດ່ພຣະອົງຜູ້ຈະເລີນ ເລື້ອງເຄີຍມີແລ້ວ ຂ້າພຣະອົງເປັນລືສີຊື່ໂຣຫິຕັດສະເປັນບຸດຂອງນາຍບ້ານປຽບໄດ້ກັບນາຍຂະມັງທະນູ ມີລິດເຫາະໄດ້ ຄວາມໄວຂອງຂ້າພຣະອົງນັ້ນປຽບໄດ້ກັບນາຍຂະມັງທະນູ ຜູ້ຍິງທະນູແມ່ນຍໍາ ສຶກສາມາດີແລ້ວ ຜູ້ຊ່ຽວຊານ ຊໍ່າຊອງ ເຝິກຊ້ອມມາດີ ເພິ່ງຍິງລູກສອນເບົາໃຫ້ຜ່ານເງົາຕານດ້ານຂວາງໄປໄດ້ໂດຍບໍ່ຍາກ ສັນນັ້ນ ການກ້າວຂາແຕ່ລະກ້າວຂອງຂ້າພຣະອົງປຽບໄດ້ກັບລະຍະທາງຈາກທະເລດ້ານຕາເວັນອອກເຖິງທະເລດ້ານຕາເວັນຕົກ ສັນນັ້ນ ຄວາມປາຖະໜາແນວນີ້ວ່າ ເຮົາຈັກເຖິງບ່ອນສຸດແຫ່ງໂລກ ດ້ວຍການໄປເກີດແກ່ຂ້າພຣະອົງນັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນັ້ນ ພຽບພ້ອມດ້ວຍຄວາມໄວແລະການກ້າວຂາແນວນີ້ ເວັ້ນຈາກການກິນ ການດື່ມ ການຫຍໍ້າ ການຊີມ ການຖ່າຍອຸດຈາຣະປັດສາວະ ການຫຼັບ ແລະ ການບັນເທົາຄວາມເມື່ອຍລ້າ ມີອາຍຸ ໑໐໐ ປີ ດໍາລົງຊີບຢູ່ໄດ້ຕັ້ງ ໑໐໐ ປີ ດໍາເນີນໄປໄດ້ຕັ້ງ ໑໐໐ ປີ ຍັງບໍ່ເຖິງບ່ອນສຸດແຫ່ງໂລກ ກໍຕາຍກ່ອນໃນລະຫວ່າງທາງ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດ

ເລື້ອງນີ້ໄວ້ດີຢ່າງຍິ່ງວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້ດ້ວຍການໄປ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເທບພະບຸດ ເຮົາບໍ່ກ່າວບ່ອນສຸດແຫ່ງໂລກທີ່ສັດບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດວ່າ ເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງໄດ້ດ້ວຍການໄປ ເຮົາບໍ່ກ່າວວ່າ ການທີ່ບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກຈະເຮັດບ່ອນສຸດແຫ່ງທຸກໄດ້

ອັນໜຶ່ງ ເຮົາບັນຍັດໂລກ[໑] ຄວາມເກີດແຫ່ງໂລກ[໒] ຄວາມດັບແຫ່ງໂລກ[໓] ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງໂລກ[໔] ໃນຮ່າງກາຍທີ່ມີປະມານວາໜຶ່ງ ມີສັນຍາ ມີໃຈນີ້ເອງ

ບໍ່ວ່າເວລາໃດ ບ່ອນສຸດແຫ່ງໂລກ
ໃຜກໍເຖິງບໍ່ໄດ້ດ້ວຍການໄປ
ແລະເມື່ອຍັງບໍ່ເຖິງບ່ອນສຸດແຫ່ງໂລກ
ຍ່ອມບໍ່ມີການປົດເປື້ອງຕົນຈາກທຸກ
ຍ້ອນເຫດນັ້ນແລ ຜູ້ຮູ້ແຈ້ງໂລກ ມີປັນຍາດີ
ເຖິງບ່ອນສຸດແຫ່ງໂລກ ຢູ່ຈົບພົມມະຈັນ
ສະງົບລະງັບ ຮູ້ບ່ອນສຸດແຫ່ງໂລກ
ຍ່ອມບໍ່ຫວັງທັງໂລກນີ້ແລະໂລກໜ້າ[໕]

**ໂຣຫິຕັດສະສູດທີ ໖ ຈົບ**

# ໗. ນັນທະສູດ

## ວ່າດ້ວຍນັນທະເທບພະບຸດ

[໑໐໗] ນັນທະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ການລ່ວງເລີຍໄປ ຄືນຜ່ານພົ້ນໄປ
ເວລາແຫ່ງໄວລະໄປຕາມລຳດັບ
ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນທຳບຸນທີ່ນຳຄວາມສຸກມາໃຫ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ການລ່ວງເລີຍໄປ ຄືນຜ່ານພົ້ນໄປ
ເວລາແຫ່ງໄວລະໄປຕາມລຳດັບ
ບຸກຄົນພິຈາລະນາເຫັນໄພນີ້ໃນມໍລະນະ
ຄວນລະໂລກາມິດ ມຸ້ງສູ່ສັນຕິເທີ້ນ[๑]

**ນັນທະສູດທີ ๗ ຈົບ**

# ໙. ນັນທິວິສາລະສູດ

## ວ່າດ້ວຍນັນທິວິສາລະເທບພະບຸດ

[໑໐໙] ນັນທິວິສາລະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ຂ້າແດ່ ພຣະມະຫາວີຣະເຈົ້າ ສະຣີຣະຍົນ ๔ ລໍ້[๒]
ມີປະຕູ ໙ ປະຕູ ເຕັມໄປດ້ວຍຂອງບໍ່ສະອາດ
ຖືກໂລພະປະກອບໄວ້ ເປັນຄືເປືອກຕົມ
ສະຣີຣະຍົນນັ້ນຈັກແລ່ນໄປໄດ້ແນວໃດ?[๑]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຍ້ອນຕັດຊະເນາະ ເຊືອກໜັງ
ຕັດຄວາມປາຖະໜາແລະຄວາມໂລບອັນຊົ່ວຊາມ
ແລະຍ້ອນຂຸດຕັນຫາພ້ອມທັງຮາກໄດ້
ສະຣີຣະຍົນນັ້ນຈັກແລ່ນໄປໄດ້ແນວນີ້[๒]

**ນັນທິວິສາລະສູດທີ ໙ ຈົບ**

# ໑໐. ສຸສິມະສູດ

## ວ່າດ້ວຍສຸສິມະເທບພະບຸດ

[໑໑໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ທ່ານມັກສາຣີບຸດບໍ?

ທ່ານພຣະອານົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍ? ທີ່ບໍ່ແມ່ນຄົນພານ ບໍ່ແມ່ນຄົນມຸທະລຸ ບໍ່ແມ່ນຄົນງົມງວາຍ ບໍ່ແມ່ນຄົນມີຈິດວິປະລາດ ຈະບໍ່ມັກທ່ານພຣະສາຣີບຸດ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະສາຣີບຸດ ເປັນບັນດິດ ມີປັນຍາຫຼາຍ ມີປັນຍາໜັກແໜ້ນ ມີປັນຍາແຈ່ມໃສ ມີປັນຍາແລ່ນໄປ ມີປັນຍາແຫຼມຄົມ ມີປັນຍາທຳລາຍ ກິເລດ ມັກໜ້ອຍ ສັນໂດດ ເປັນຜູ້ສະຫງັດ ບໍ່ຄຸກຄີ ຜາຣົບຄວາມພຽນ ເຂົ້າໃຈເວົ້າ ອົດທົນຕໍ່ຄຳເວົ້າ ເປັນຜູ້ທັກທ້ວງຕຳໜິຄົນເຮັດຊົ່ວ ໃຜນໍທີ່ບໍ່ແມ່ນຄົນພານ ບໍ່ແມ່ນຄົນ ມຸທະລຸ ບໍ່ແມ່ນຄົນງົມງວາຍ ບໍ່ແມ່ນຄົນມີຈິດວິປະລາດ ຈະບໍ່ມັກທ່ານພຣະສາຣີບຸດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ອານົນ ຂໍ້ນີ້ເປັນແນວນັ້ນ ອານົນ ຂໍ້ນີ້ເປັນ ແນວນັ້ນ ໃຜນໍ? ທີ່ບໍ່ແມ່ນຄົນພານ ບໍ່ແມ່ນຄົນມຸທະລຸ ບໍ່ແມ່ນຄົນງົມງວາຍ ບໍ່ແມ່ນຄົນມີຈິດວິປະລາດ ຈະບໍ່ມັກສາຣີບຸດ ອານົນ ສາຣີບຸດເປັນບັນດິດ ມີປັນຍາຫຼາຍ ມີປັນຍາໜັກແໜ້ນ ມີປັນຍາແຈ່ມໃສ ມີປັນຍາແລ່ນໄປ ມີປັນຍາແຫຼມຄົມ ມີປັນຍາທຳລາຍກິເລດ ມັກໜ້ອຍ ສັນໂດດ ເປັນຜູ້ສະຫງັດ ບໍ່ຄຸກຄີ ຜາຣົບຄວາມພຽນ ເຂົ້າໃຈເວົ້າ ອົດທົນຕໍ່ຄຳເວົ້າ ເປັນຜູ້ທັກທ້ວງ ຕຳໜິຄົນເຮັດຊົ່ວ ໃຜນໍ? ທີ່ບໍ່ແມ່ນຄົນພານ ບໍ່ແມ່ນຄົນມຸທະລຸ ບໍ່ແມ່ນຄົນງົມງວາຍ ບໍ່ແມ່ນຄົນມີຈິດວິປະລາດ ຈະບໍ່ມັກສາຣີບຸດ

ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າ ແລະ ທ່ານພຣະອານົນ ກຳລັງກ່າວສັນເສີນຄຸນຂອງທ່ານພຣະສາຣີບຸດຢູ່ ສຸສີມະເທບພະບຸດຜູ້ມີເທບພະບຸດບໍລິສັດ ທີ່ມີຈຳນວນຫຼາຍຮ້ອມລ້ອມແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂໍ້ນີ້ ເປັນແນວນັ້ນ ຂ້າແດ່ພຣະສຸຄົດເຈົ້າ ຂໍ້ນີ້ເປັນແນວນັ້ນ ໃຜນໍ? ທີ່ບໍ່ແມ່ນຄົນພານ ບໍ່ແມ່ນຄົນມຸທະລຸ ບໍ່ແມ່ນຄົນງົມງວາຍ ບໍ່ແມ່ນຄົນມີຈິດວິປະລາດ ຈະບໍ່ມັກທ່ານພຣະສາຣີບຸດ ທ່ານພຣະສາຣີບຸດເປັນບັນດິດ ຯລຯ ຕຳໜິຄົນເຮັດຊົ່ວ ໃຜນໍ? ທີ່ບໍ່ແມ່ນຄົນພານ ບໍ່ແມ່ນຄົນມຸທະລຸ ບໍ່ແມ່ນຄົນງົມງວາຍ ບໍ່ແມ່ນຄົນມີຈິດວິປະລາດ ຈະບໍ່ມັກທ່ານພຣະສາຣີບຸດ

ຍ້ອນວ່າ ຂ້າພຣະອົງເຂົ້າໄປຫາເທບພະບຸດບໍລິສັດໃດ ໆ ກໍໄດ້ຍິນສຽງ (ເວົ້າ) ຢ່າງໜາຫູວ່າ ທ່ານພຣະສາຣີບຸດເປັນບັນດິດ ມີປັນຍາຫຼາຍ ມີປັນຍາໜັກແໜ້ນ ມີປັນຍາແຈ່ມໃສ ມີປັນຍາແລ່ນໄປ ມີປັນຍາແຫຼມຄົມ ມີປັນຍາທຳລາຍກິເລດ ມັກໜ້ອຍ ສັນໂດດ ເປັນຜູ້ສະຫງັດ ບໍ່ຄຸກຄີ ຜາຣົບຄວາມພຽນ ເຂົ້າໃຈເວົ້າ ອົດທົນຕໍ່ຄຳເວົ້າ ເປັນຜູ້ທັກທ້ວງ ຕຳໜິຄົນເຮັດຊົ່ວ ໃຜນໍ? ທີ່ບໍ່ແມ່ນຄົນພານ ບໍ່ແມ່ນຄົນມຸທະລຸ ບໍ່ແມ່ນຄົນງົມງວາຍ ບໍ່ແມ່ນຄົນມີຈິດວິປະລາດ ຈະບໍ່ມັກທ່ານພຣະສາຣີບຸດ

ຄັ້ງນັ້ນ ເທບພະບຸດບໍລິສັດຂອງສຸສີມະເທບພະບຸດ ເມື່ອສຸສີມະເທບພະບຸດກຳລັງກ່າວ

ສັນເສີນຄຸນຂອງທ່ານພຣະສາຣີບຸດຢູ່ ຕ່າງປີ້ມປີຕິເບີກບານໃຈ ເກີດປີຕິໂສມະນັດ ມີຣັດສະໝີວັນນະພຸດຜ່ອງຜາກົດຢູ່ ຄືແກ້ວມະນີແລະແກ້ວໄພທູນອັນງົດງາມຕາມທຳມະຊາດ ຖືກນາຍຊ່າງເຈຍຣະໄນດີແລ້ວແປດຫຼ່ຽມ ວາງໄວ້ເທິງຜ້າກຳພົນສີເຫຼືອງ ສ່ອງແສງແພວພາວຮຸ່ງໃສຢູ່ ສັນນັ້ນ

ເທບພະບຸດບໍລິສັດຂອງສຸສີມະເທບພະບຸດ ເມື່ອສຸສີມະເທບພະບຸດກຳລັງກ່າວສັນເສີນຄຸນຂອງທ່ານພຣະສາຣີບຸດຢູ່ ຕ່າງປີ້ມປີຕິເບີກບານໃຈ ເກີດປີຕິໂສມະນັດ ມີຣັດສະໝີວັນນະພຸດຜ່ອງຜາກົດຢູ່ ຄືຄຳແທ່ງຊົມພູນຸດ°ເປັນຂອງທີ່ບຸດນາຍຊ່າງຄຳຜູ້ຂະຫຍັນໃສ່ເບົ້າຫຼອມໄລ່ມົນທິນ ຈົນໝົດຣາຄີແລ້ວ ວາງໄວ້ເທິງຜ້າກຳພົນສີເຫຼືອງ ສ່ອງແສງແພວພາວ ຮຸ່ງໃສຢູ່ ສັນນັ້ນ

ເທບພະບຸດບໍລິສັດຂອງສຸສີມະເທບພະບຸດ ຯລຯ ມີຣັດສະໝີວັນນະພຸດຜ່ອງຜາກົດຢູ່ ຄືດາວເພັດ ເມື່ອອາກາດປອດໂປ່ງປາສະຈາກເມກໝອກໃນລະດູສາຣະທະການ ສ່ອງແສງແພວພາວຮຸ່ງໃສຢູ່ໃນເວລາໃກ້ຮຸ່ງ ສັນນັ້ນ

ເທບພະບຸດບໍລິສັດຂອງສຸສີມະເທບພະບຸດ ເມື່ອສຸສີມະເທບພະບຸດກຳລັງກ່າວສັນເສີນຄຸນຂອງທ່ານພຣະສາຣີບຸດຢູ່ ຕ່າງປີ້ມປີຕິເບີກບານໃຈ ເກີດປີຕິໂສມະນັດ ມີຣັດສະໝີວັນນະພຸດຜ່ອງຜາກົດຢູ່ ຄືດວງອາທິດ ເມື່ອອາກາດປອດໂປ່ງປາສະຈາກເມກໝອກໃນລະດູສາຣະທະການພວຍພຸ່ງຂຶ້ນສູ່ທ້ອງຟ້າ ກຳຈັດຄວາມມືດທີ່ມີຢູ່ໃນອາກາດທັງປວງ ສ່ອງແສງແພວພາວຮຸ່ງໃສຢູ່ສັນນັ້ນ

ຄັ້ງນັ້ນ ສຸສີມະເທບພະບຸດໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ຜາຣົບທ່ານພຣະສາຣີບຸດ ວ່າ

ທ່ານພຣະສາຣີບຸດ ໃຜ ໆ ກໍຮູ້ຈັກດີວ່າ ເປັນບັນດິດ
ບໍ່ແມ່ນຄົນມັກໂກດ ມີຄວາມມັກໜ້ອຍ ສະງົບສະງ່ຽມ
ເຝິກແລ້ວ ມີຄຸນງາມຄວາມດີ ອັນພຣະສາດສະດາຊົງສັນເສີນ
ເປັນຜູ້ສະແຫວງຫາຄຸນອັນຍິ່ງ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖາຕອບສຸສີມະເທບພະບຸດ ຜາຣົບທ່ານພຣະສາຣີບຸດວ່າ

ສາຣີບຸດໃຜ ໆ ກໍຮູ້ຈັກດີວ່າເປັນບັນດິດ
ບໍ່ແມ່ນຄົນມັກໂກດ ມີຄວາມມັກໜ້ອຍ ສະງົບສະງ່ຽມ
ເຝິກຝົນອົບຮົມດີແລ້ວ ຖ້າເວລາຢູ່໌

**ສຸສີມະສູດທີ ໙ ຈົບ**

# ໑໐. ນານາຕິດຖິຍະສາວະກະສູດ

## ວ່າດ້ວຍເທບພະບຸດຜູ້ເປັນສາວົກຂອງເດຍຣະຖີຕ່າງ ໆ

[໑໑໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອ ກະແຕ ເຂດນະຄອນຣາດຊະຄຶ ຄັນເມື່ອຣາຕີຜ່ານໄປ ພວກເທບພະບຸດຜູ້ເປັນສາວົກຂອງ ເດຍຣະຖີຕ່າງ ໆ ເປັນຈຳນວນຫຼາຍ ຄື ອະສະມະເທບພະບຸດ ສະຫະລີເທບພະບຸດ ນິກະເທບພະບຸດ ອາ ໂກຕະກະເທບພະບຸດ ເວຕຳພະຣີເທບພະບຸດ ມານະວະຄາມິຍະເທບພະບຸດ ມີວັນນະງົດງາມ ຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເວລຸວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດ ບ່ອນຢູ່ຖວາຍອະພິວາດ ແລ້ວຢືນຢູ່ບ່ອນທີ່ສົມຄວນ

ອະສະມະເທບພະບຸດຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ ມີພຣະພາກເຈົ້າ ຜາຣົບປູຣະນະ ກັດສະປະ ວ່າ

ທ່ານປູຣະນະ ກັດສະປະແນມບໍ່ເຫັນບາບຫຼືບຸນຂອງຕົນ
ຍ້ອນວ່າການຕັດ ການຂ້າ ການຂົ້ງນ ການເສື່ອມຊັບ
ທ່ານຈຶ່ງບອກໃຫ້ເບົາໃຈສາ
ສົມຄວນທີ່ຈະຍ້ອງຍໍທ່ານວ່າເປັນສາດສະດາໃນໂລກນີ້

ລຳດັບນັ້ນ ສະຫະລີເທບພະບຸດໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ຜາຣົບ ມັກຂະລິ ໂຄສານຕໍ່ໄປ ວ່າ

ທ່ານມັກຂະລິ ໂຄສານ ສັງລວມຕົນດີແລ້ວ
ດ້ວຍການກີດກັນບາບດ້ວຍຕະບະ
ລະວາຈາທີ່ກໍ່ໃຫ້ເກີດການຜິດກັນຖຽງກັນ
ເປັນຜູ້ສະໝໍ່າສະເໝີ ງົດເວັ້ນຈາກສິ່ງທີ່ມີໂທດ
ເວົ້າຈິງ ເປັນຜູ້ໝັ້ນຄົງ ບໍ່ເຮັດບາບໄດ້ຢ່າງເດັດຂາດ

ລຳດັບນັ້ນ ນິກະເທບພະບຸດໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ຜາ ຣົບນິຄົນ ນາຕະບຸດຕໍ່ໄປ ວ່າ

ທ່ານນິຄົນ ນາຕະບຸດ ເປັນຜູ້ກີດກັນບາບ
ມີປັນຍາເຄື່ອງບໍລິຫານ ເຫັນໄພໃນສັງສາຣະວັດ

> ເປັນຜູ້ລະມັດລະວັງທັງ ໔ ຍາມ[1]
> ເປີດເຜີຍສິ່ງທີ່ຕົນເຫັນແລ້ວແລະຟັງແລ້ວ
> ເປັນຜູ້ບໍ່ຫຍາບຊ້າເລີຍ

ລຳດັບນັ້ນ ອາໂກຕະກະເທບພະບຸດໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າຜາຣົບພວກເດຍຣະຖີຕ່າງ ໆ ຕໍ່ໄປອີກວ່າ

> ທ່ານປະກຸທະ ກັດຈາຍະນະ ທ່ານນິຄົນ ນາຕະບຸດ
> ທ່ານມັກຂະລີ ໂຄສານ ແລະ ທ່ານປູຣະນະ ກັດສະປະເຫຼົ່ານີ້
> ລ້ວນແຕ່ເປັນຄູຂອງໝູ່ຄະນະ ບັນລຸຄວາມເປັນສະມະນະ[6]
> ທ່ານເຫຼົ່ານັ້ນ ເປັນຜູ້ບໍ່ໄກຈາກສັດຕະບຸຣຸດເລີຍ

ລຳດັບນັ້ນ ເວຕຳພະຣິເທບພະບຸດໄດ້ກ່າວຕອບອາໂກຕະກະເທບພະບຸດດ້ວຍຄາຖາ ວ່າ

> ໃນການໃດ ໆ ໝາຈິ້ງຈອກທີ່ເປັນສັດນ້ອຍ ໆ ຊັ້ນຊົ່ວ
> ຈະສະແດງຈະສັນດານໃຫ້ສະເໝີຣາດຊະສີບໍ່ໄດ້ເລີຍ
> ຄູຂອງໝູ່ຄະນະເປັນຄົນເປືອຍ ມັກເວົ້າຄຳຕົວະ
> ມີພຶດຕິກຳໜ້າຣະແວງສົງໄສ ຈະທຽບກັບສັດຕະບຸຣຸດບໍ່ໄດ້ເລີຍ

ລຳດັບນັ້ນ ມານຜູ້ມີບາບເຂົ້າສິງເວຕຳພະຣິເທບພະບຸດແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

> ສັດເຫຼົ່າໃດ ປະກອບດ້ວຍການກິດກັນບາບດ້ວຍຕະບະ
> ຖືຮັກສາຄວາມສະງົບສະຫງັດ ຕິດຢູ່ໃນຮູບ ເພີດເພີນໃນເທວະໂລກ
> ສັດເຫຼົ່ານັ້ນ ຊື່ວ່າ ສັ່ງສອນໂດຍຖືກຕ້ອງເພື່ອປະຣະໂລກໂດຍແທ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງໄດ້ຕັດຕອບ ມານຜູ້ມີບາບດ້ວຍຄາຖາ ວ່າ

> ຮູບໃດ ໆ ຈະຢູ່ໃນໂລກນີ້ຫຼືໂລກໜ້າ
> ແລະແມ່ນຈະຢູ່ໃນອາກາດ ມີຣັດສະໝີຮຸ່ງເຮືອງກໍຕາມເທີ້ນ
> ນະມຸຈິມານ ຮູບທັງໝົດນັ້ນ ທ່ານກໍສັນເສີນແລ້ວວາງດັກໄວ້
> ຄືບຸກຄົນໃຊ້ເຫຍື່ອລໍ່ຂ້າປາ ສັນນັ້ນ

ລຳດັບນັ້ນ ມານະວະຄາມິຍະເທບພະບຸດໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້

ມີພຣະພາກເຈົ້າ ຜາຣົບພຣະຜູ້ມີພຣະພາກເຈົ້າ ວ່າ

ຄົນເວົ້າກັນວ່າ ບັນດາພູໃນນະຄອນຣາດຊະຄຶ
ພູວິປຸລະຍອດຍັ້ງມທີ່ສຸດ
ບັນດາພູທີ່ຕັ້ງຢູ່ໃນປ່າຫິມະພານ ພູເສຕະບັນພົດຍອດຍັ້ງມທີ່ສຸດ
ບັນດາສິ່ງທີ່ລອຍຢູ່ໃນອາກາດ ດວງອາທິດຍອດຍັ້ງມທີ່ສຸດ
ບັນດາແມ່ນ້ຳທັງຫຼາຍ ສະມຸດຍອດຍັ້ງມທີ່ສຸດ
ບັນດາດວງດາວທັງຫຼາຍ ດວງຈັນຍອດຍັ້ງມທີ່ສຸດ
ບັນດິດກ່າວວ່າ ພຣະພຸດທະເຈົ້າເລີດກວ່າມະນຸດແລະເທວະດາ

**ນານາຕິດຖິຍະສາວະກະສູດທີ ໑໐ ຈົບ**

**ນານາຕິດຖິຍະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສິວະສູດ
໒. ເຂມະສູດ
໓. ເສຣີສູດ
໔. ຄະຕິກາຣະສູດ
໕. ຊັນຕຸສູດ
໖. ໂຣຫິຕັດສະສູດ
໗. ນັນທະສູດ
໘. ນັນທິວິສາລະສູດ
໙. ສຸສິມະສູດ
໑໐. ນານາຕິດຖິຍະສາວະກະສູດ

**ເທວະປຸດຕະສັງຍຸດ ຈົບບໍລິບູນ**

# ໓. ໂກສະລະສັງຍຸດ

# ໑. ປະຖົມວັກ

### ໝວດທີ ໑

## ໑. ທະຫະຣະສູດ

### ວ່າດ້ວຍສິ່ງເລັກໜ້ອຍ

[໑໑໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ໄດ້ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຊົງສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ພຣະໂຄດົມຜູ້ຈະເລີນ ຊົງຍັ້ງຢືນໄດ້ບໍ່ວ່າ? ເປັນຜູ້ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ກໍບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງກໍເພິ່ງກ່າວວ່າ ພຣະຕະຖາຄົດໄດ້ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານແລ້ວ ຍ້ອນວ່າອາຕະມາພາບໄດ້ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານແລ້ວ

ພຣະເຈົ້າປະເສນທິໂກສົນທູນຖາມພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ພຣະໂຄດົມຜູ້ຈະເລີນ ແມ່ນສະມະນະພາມລາງພວກ ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍວ່າເປັນຄົນດີ ຄື ທ່ານປູຣະນະ ກັດສະປະທ່ານມັກຂະລີ ໂຄສານ ທ່ານນິຄົນ ນາຕະບຸດ ທ່ານສັນໄຊ ເວລັດຖະບຸດ ທ່ານປະກຸທະ ກັດຈາຍະນະ ທ່ານອະຊິຕະ ເກສະກຳພົນ ສະມະນະພາມເຫຼົ່ານັ້ນເມື່ອຖືກຂ້າພຣະອົງຖາມວ່າ ທ່ານທັງຫຼາຍຍັ້ງຢືນຕົນບໍວ່າ ເປັນຜູ້ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານກໍບໍ່ຍັ້ງຢືນ ວ່າ ເປັນຜູ້ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານສ່ວນພຣະໂຄດົມຜູ້ຈະເລີນຍັງຊົງເປັນໜຸ່ມໂດຍພຣະຊາດແລະຍັງຊົງເປັນຜູ້ໃໝ່ໂດຍບັນພະຊາ ເປັນຫຍັງຈຶ່ງກ້າຍັ້ງຢືນຕົນນໍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ສິ່ງ ໔ ຢ່າງນີ້ ບໍ່ຄວນດູຖູກດູໝິ່ນ ວ່າເລັກໜ້ອຍ

ສິ່ງ ໔ ຢ່າງ ອັນໃດແດ່ ຄື

໑. ກະສັດ ບໍ່ຄວນດູຖູກດູໝິ່ນ ວ່າ ຍັງຊົງພຣະເຍົາ
໔. ງູ ບໍ່ຄວນດູຖູກດູໝິ່ນ ວ່າ ໂຕນ້ອຍ
໓. ໄຟ ບໍ່ຄວນດູຖູກດູໝິ່ນ ວ່າ ເລັກໜ້ອຍ
໔. ພິກຂຸ ບໍ່ຄວນດູຖູກດູໝິ່ນ ວ່າ ຍັງໜຸ່ມ

ສິ່ງ ໔ ຢ່າງນີ້ແລ ບໍ່ຄວນດູຖູກດູໝິ່ນ ວ່າເລັກໜ້ອຍ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ນໍຣະຊົນ ບໍ່ຄວນດູຖູກດູໝິ່ນກະສັດຜູ້ເຖິງພ້ອມດ້ວຍຊາດຕະກູນ
ຜູ້ເປັນອະພິຊາດ[໑] ຜູ້ມີຍົດ ວ່າຍັງຊົງພຣະເຍົາ
ຍ້ອນພຣະອົງໄດ້ສະເຫວີຍຣາດຊະສົມບັດແລ້ວ
ເປັນກະສັດຈອມມະນຸດ ຖ້າຊົງພິໂລດ
ຈະລົງພຣະຣາດຊະອາດຍາຢ່າງໜັກແກ່ຜູ້ນັ້ນໄດ້
ສະນັ້ນ ບຸກຄົນເມື່ອຈະຖືຮັກສາຊີວິດຂອງຕົນ
ເພິ່ງຫຼີບຫຼີກການດູຖູກ ດູໝິ່ນກະສັດນັ້ນ

ນໍຣະຊົນ ເມື່ອເຫັນງູຢູ່ເຮືອນ ຫຼື ຢູ່ປ່າກໍຕາມ
ບໍ່ຄວນດູຖູກດູໝິ່ນ ວ່າໂຕນ້ອຍ
ຍ້ອນງູເປັນສັດມີພິດບໍ່ວ່າຈະມີວັນນະສູງແລະຕ່ຳ[໒]
ງູນັ້ນ ເພິ່ງຕອດກັດຊາຍຍິງຜູ້ຈ້າໃນການບາງເວລາ
ສະນັ້ນ ບຸກຄົນເມື່ອຈະຖືຮັກສາຊີວິດຂອງຕົນ
ເພິ່ງຫຼີບຫຼີກການດູຖູກ ດູໝິ່ນງູນັ້ນ

ນໍຣະຊົນ ບໍ່ຄວນດູຖູກດູໝິ່ນໄຟທີ່ກິນເຊື້ອຫຼາຍ
ລຸກເປັນນ້ຳ ໄໝ້ດຳເປັນທາງ ວ່າເລັກໜ້ອຍ
ຍ້ອນໄຟນັ້ນ ເມື່ອໄດ້ເຊື້ອແລ້ວກໍກາຍເປັນກອງໄຟໃຫຍ່ໄດ້
ເພິ່ງລາມໄໝ້ຊາຍຍິງຜູ້ຈ້າໃນການບາງເວລາ
ສັນນັ້ນ ບຸກຄົນເມື່ອຈະຖືຮັກສາຊີວິດຂອງຕົນ
ເພິ່ງຫຼີບຫຼີກການດູຖູກດູໝິ່ນໄຟນັ້ນ

ອັນໜຶ່ງ ປ່າໃດທີ່ຖືກໄຟໄໝ້ຈົນດຳແລ້ວ
ເມື່ອວັນຄືນລ່ວງໄປ ໆ ພັນຫຍ້າ ຫຼື ຕົ້ນໄມ້ຍັງງອກຂຶ້ນໄດ້
ສ່ວນຜູ້ໃດຖືກອຳນາດພິກຂຸຜູ້ມີສີນແຜດເຜົາ
ບຸດທິດາແລະປະສຸສັດຂອງຜູ້ນັ້ນຍ່ອມພິນາດໄປ
ທາຍາດຂອງເຂົາກໍຍ່ອມບໍ່ໄດ້ຮັບຊັບມໍລະດົກ
ເຂົາເປັນຜູ້ບໍ່ມີເຊື້ອຍາດ ບໍ່ມີທາຍາດ
ຍ່ອມເປັນຄືກົກຕານປາຍກຸດ

ຍ້ອນແນວນັ້ນ ບຸກຄົນຜູ້ເປັນບັນດິດ
ເມື່ອພິຈາລະນາເຫັນກະສັດຜູ້ມີຍົດ ງູ ໄຟ
ແລະພິກຂຸຜູ້ມີສີນວ່າເປັນປະໂຫຍດແກ່ຕົນ
ເພິ່ງປະພຶດໂດຍຖືກຕ້ອງຕໍ່ເພິ່ນໄວ້ເທີ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພຣະເຈົ້າປະເສນທິໂກສົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະໂຄດົມຜູ້ຈະເລີນຊົງປະກາດທຳໂດຍປະຣິຍາຍເປັນຈຳນວນຫຼາຍ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ສັນນັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຈຳຂ້າພຣະອົງໄວ້ວ່າ ເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ທະຫະຣະສູດທີ ໑ ຈົບ**

# ໘. ປຸຣິສະສູດ

## ວ່າດ້ວຍທຳທີ່ບໍ່ເກີດປະໂຫຍດແກ່ບຸຣຸດ

[໑໑໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳເຫຼົ່າໃດ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ທຳ ໓ ປະການ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ທຳ ໓ ປະການ ອັນໃດແດ່ ຄື

໑. ໂລພະທຳ (ທຳຄືໂລພະ) ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

໒. ໂທສະທຳ (ທຳຄືໂທສະ) ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

໓. ໂມຫະທຳ (ທຳຄືໂມຫະ) ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ທຳ ໓ ປະການນີ້ແລ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ໂລພະ ໂທສະ ແລະ ໂມຫະເກີດຂຶ້ນພາຍໃນຕົນ
ຍ່ອມທຳຮ້າຍບຸຣຸດຜູ້ມີຈິດຊົ່ວຊາມ
ຄືຂີໄຜ່ກຳຈັດຕົ້ນໄຜ່ ສັນນັ້ນ

**ປຸຣິສະສູດທີ ໒ ຈົບ**

# ໓. ຊະຣາມໍຣະນະສູດ

## ວ່າດ້ວຍຊະຣາແລະມໍລະນະ

[໑໑໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄົນເກີດມາແລ້ວທີ່ພົ້ນຈາກຊະຣາແລະມໍລະນະມີແດ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ຄົນເກີດມາແລ້ວທີ່ຈະພົ້ນຈາກຊະຣາ

ແລະມໍລະນະບໍ່ມີເລີຍ ແມ່ນຂັດຕິຍະມະຫາສານເຊິ່ງເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳແລະເງິນຫຼວງຫຼາຍ ມີຊັບເຄື່ອງພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດຫຼວງຫຼາຍ ກໍບໍ່ພົ້ນຈາກຊະຣາແລະມໍລະນະ

ແມ່ນພາມມະນະມະຫາສານ ໆລໆ

ແມ່ນຄະຫະບໍດີມະຫາສານ ເຊິ່ງເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳແລະເງິນຫຼວງຫຼາຍ ມີຊັບເຄື່ອງພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດຫຼວງຫຼາຍ ກໍບໍ່ພົ້ນຈາກຊະຣາແລະມໍລະນະ

ແມ່ນພິກຂຸທຸກອົງ ເຊິ່ງເປັນພຣະອະຣະຫັນ ສິ້ນອາສະວະແລ້ວ ຢູ່ຈົບພົມມະຈັນ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ຮ່າງກາຍນີ້ ແມ່ນຂອງພຣະອະຣະຫັນເຫຼົ່ານັ້ນ ກໍເປັນສະພາບແຕກດັບ ຕ້ອງປະຖິ້ມເປັນທຳມະດາ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ໆລໆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຣາດຊະລົດອັນວິຈິດຍ່ອມເປ່ເພ
ແມ່ນຮ່າງກາຍນີ້ກໍຍ່ອມເຂົ້າເຖິງຊະຣາ
ແຕ່ວ່າທຳຂອງສັດຕະບຸຣຸດບໍ່ເຂົ້າເຖິງຊະຣາ
ສັດຕະບຸຣຸດກັບສັດຕະບຸຣຸດທີ່ນັ້ນຈຶ່ງຮູ້ກັນໄດ້

**ຊະຣາມໍຣະນະສູດທີ ๓ ຈົບ**

# ໔. ປິຍະສູດ

## ວ່າດ້ວຍຜູ້ຮັກຕົນ

[໑໑໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມື້ນີ້ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ຊົນເຫຼົ່າໃດນໍ? ຊື່ວ່າຮັກຕົນ ຊົນເຫຼົ່າໃດນໍ? ຊື່ວ່າບໍ່ຮັກຕົນຂ້າພຣະອົງໄດ້ມີຄວາມຄິດດັ່ງນີ້ວ່າ ກໍຊົນເຫຼົ່າໃດປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດຊົນເຫຼົ່ານັ້ນ ຊື່ວ່າບໍ່ຮັກຕົນ ແລະ ຊົນເຫຼົ່ານັ້ນ ຈະກ່າວແນວນີ້ວ່າ ເຮົາຮັກຕົນກໍຕາມ ຊົນເຫຼົ່ານັ້ນກໍຊື່ວ່າ ບໍ່ຮັກຕົນ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຊົນຜູ້ບໍ່ຮັກກັນທຳຄວາມເສຍຫາຍໃດໃຫ້ແກ່ຜູ້ບໍ່ຮັກກັນໄດ້ ຊົນເຫຼົ່ານັ້ນ ກໍທຳຄວາມເສຍຫາຍນັ້ນ ໃຫ້ແກ່ຕົນເອງໄດ້ ສັນນັ້ນ ຊົນເຫຼົ່ານັ້ນຈຶ່ງຊື່ວ່າ ບໍ່ຮັກຕົນ ສ່ວນຊົນເຫຼົ່າໃດ ປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຊົນເຫຼົ່ານັ້ນ ຊື່ວ່າຮັກຕົນ ແມ່ນຊົນເຫຼົ່ານັ້ນຈະກ່າວແນວນີ້ວ່າ ເຮົາບໍ່ຮັກຕົນກໍຕາມ ຊົນເຫຼົ່ານັ້ນກໍຊື່ວ່າຮັກຕົນ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຊົນຜູ້ທີ່ຮັກກັນທຳຄວາມຈະເລີນໃດໃຫ້ແກ່ຜູ້ທີ່ຮັກກັນໄດ້ ຊົນເຫຼົ່ານັ້ນ ກໍທຳຄວາມຈະເລີນນັ້ນໃຫ້ແກ່ຕົນເອງໄດ້ ສັນນັ້ນ ຊົນເຫຼົ່ານັ້ນ ຈຶ່ງຊື່ວ່າຮັກຕົນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ເປັນແນວນັ້ນ ຍ້ອນວ່າ ຊົນລາງພວກປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຊົນເຫຼົ່ານັ້ນຊື່ວ່າ ບໍ່ຮັກຕົນ ແມ່ນຊົນເຫຼົ່ານັ້ນ ຈະກ່າວແນວນີ້ວ່າ ເຮົາຮັກຕົນກໍຕາມ ຊົນເຫຼົ່ານັ້ນກໍຊື່ວ່າບໍ່ຮັກຕົນ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຊົນຜູ້ບໍ່ຮັກກັນທຳຄວາມເສຍຫາຍໃດ ໃຫ້ແກ່ຜູ້ບໍ່ຮັກກັນໄດ້ ຊົນເຫຼົ່ານັ້ນກໍເຮັດຄວາມເສຍຫາຍນັ້ນໃຫ້ແກ່ຕົນເອງໄດ້ ສັນນັ້ນ ຊົນເຫຼົ່ານັ້ນ ຈຶ່ງຊື່ວ່າບໍ່ຮັກຕົນ ສ່ວນຊົນລາງພວກປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຊົນເຫຼົ່ານັ້ນ ຊື່ວ່າຮັກຕົນ ແມ່ນຊົນເຫຼົ່ານັ້ນຈະກ່າວແນວນີ້ວ່າ ເຮົາບໍ່ຮັກຕົນກໍຕາມ ຊົນເຫຼົ່ານັ້ນ ກໍຊື່ວ່າ ຮັກຕົນ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຊົນຜູ້ຮັກກັນທຳຄວາມຈະເລີນໃດ ໃຫ້ແກ່ຜູ້ທີ່ຕົນຮັກໄດ້ ຊົນເຫຼົ່ານັ້ນ ກໍທຳຄວາມຈະເລີນນັ້ນແກ່ຕົນເອງໄດ້ ສັນນັ້ນ ຊົນເຫຼົ່ານັ້ນ ຈຶ່ງຊື່ວ່າຮັກຕົນ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຖ້າບຸກຄົນຮູ້ວ່າຮັກຕົນ ກໍບໍ່ເພິ່ງຊັກນຳຕົນໄປໃນທາງຊົ່ວ
ຍ້ອນຄວາມສຸກນັ້ນ ບຸກຄົນຜູ້ມັກເຮັດຊົ່ວຈະຫາບໍ່ໄດ້ໂດຍງ່າຍ
ເມື່ອບຸກຄົນຖືກຄວາມຕາຍຄອບງຳ
ກໍຈະຕ້ອງລະຖິ້ມພົບມະນຸດໄປ

ກໍອັນໃດນໍ? ເປັນສົມບັດຂອງເຂົາ
ທີ່ເຂົາຈະນຳອັນໃດໄປໄດ້
ອັນໃດນໍ? ຈະຕິດຕາມເຂົາໄປ
ຄືເງົາຕິດຕາມໂຕໄປ ສັນນັ້ນ

ສັດຜູ້ຈະຕ້ອງຕາຍໃນໂລກນີ້
ເຮັດກຳອັນໃດໄວ້ ຄື ບຸນແລະບາບທັງ ໒ ປະການນີ້

ບຸນແລະບາບນັ້ນເອງເປັນສົມບັດຂອງເຂົາ
ທີ່ເຂົາຈະນຳເອົາບຸນແລະບາບນັ້ນໄປໄດ້
ບຸນແລະບາບນັ້ນຍ່ອມຕິດຕາມເຂົາໄປ
ຄືເງົາຕິດຕາມໂຕໄປ ສັນນັ້ນ

ຍ້ອນແນວນັ້ນ ບຸກຄົນຄວນເຮັດໄວ້ແຕ່ກຳດີ
ສະສົມໄວ້ເປັນສົມບັດໃນໂລກໜ້າ
ຍ້ອນບຸນເປັນທີ່ເພິ່ງຂອງສັດທັງຫຼາຍໃນໂລກໜ້າ

**ປິຍະສູດທີ ໔ ຈົບ**

# ໕. ອັດຕະຣັກຂິຕະສູດ

## ວ່າດ້ວຍຜູ້ຖືຮັກສາຕົນ

[໑໑໖] ພຣະເຈົ້າປະເສນທິໂກສົນປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ຊົນເຫຼົ່າໃດນໍ? ຊື່ວ່າຖືຮັກສາຕົນ ຊົນເຫຼົ່າໃດນໍ? ຊື່ວ່າບໍ່ຖືຮັກສາຕົນ ຂ້າພຣະອົງໄດ້ມີຄວາມຄິດດັ່ງນີ້ວ່າ ກໍຊົນລາງພວກປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຊົນເຫຼົ່ານັ້ນຊື່ວ່າ ບໍ່ຖືຮັກສາຕົນ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນການຖືຮັກສາເຊັ່ນນັ້ນ ເປັນການຖືຮັກສາພາຍນອກ ບໍ່ແມ່ນເປັນການຖືຮັກສາພາຍໃນສັນນັ້ນ ຊົນເຫຼົ່ານັ້ນ ຈຶ່ງຊື່ວ່າ ບໍ່ຖືຮັກສາຕົນ ສ່ວນຊົນລາງພວກປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຊົນເຫຼົ່ານັ້ນ ຊື່ວ່າຖືຮັກສາຕົນ ເຖິງວ່າພົນຊ້າງ ພົນມ້າ ພົນລົດຫຼືພົນຍ່າງ ບໍ່ຖືຮັກສາເຂົາຢູ່ກໍຕາມ ຊົນເຫຼົ່ານັ້ນ ກໍຊື່ວ່າ ຖືຮັກສາຕົນ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນການຖືຮັກສາໄວ້ແນວນັ້ນ ເປັນການຖືຮັກສາພາຍໃນ ບໍ່ແມ່ນເປັນການຖືຮັກສາພາຍນອກ ສັນນັ້ນ ຊົນເຫຼົ່ານັ້ນ ຈຶ່ງຊື່ວ່າ ຖືຮັກສາຕົນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ກໍຊົນລາງພວກປະພຶດກາຍທຸດຈະຣິດ ຯລຯ ຊົນເຫຼົ່ານັ້ນ ຊື່ວ່າ ບໍ່ຖືຮັກສາຕົນ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນການຖືຮັກສາເຊັ່ນນັ້ນ ເປັນການຖືຮັກສາພາຍນອກ ບໍ່ແມ່ນເປັນການຖືຮັກສາພາຍໃນ ສັນນັ້ນ ຊົນເຫຼົ່ານັ້ນ ຈຶ່ງຊື່ວ່າ ບໍ່ຖືຮັກສາຕົນ ສ່ວນຊົນລາງພວກປະພຶດກາຍສຸດຈະຣິດ ວະຈີ

ສຸດຈະຣິດ ມະໂນສຸດຈະຣິດ ຊົນເຫຼົ່ານັ້ນ ຊື່ວ່າ ຖືຮັກສາຕົນ ເຖິງວ່າພົນຊ້າງ ພົນມ້າ ພົນລົດ ຫຼືພົນຍ່າງ ບໍ່ຖືຮັກສາເຂົາກໍຕາມ ຊົນເຫຼົ່ານັ້ນ ກໍຊື່ວ່າ ຖືຮັກສາຕົນ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນການຖືຮັກສາເຊັ່ນນັ້ນ ເປັນການຖືຮັກສາພາຍໃນ ບໍ່ແມ່ນເປັນການຖືຮັກສາພາຍນອກ ສັນນັ້ນ ຊົນເຫຼົ່ານັ້ນ ຈຶ່ງຊື່ວ່າ ຖືຮັກສາຕົນ

ພຣະຜູ້ມີພຣະພາກເຈົ້າ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ການສັງລວມກາຍເປັນການດີ
ການສັງລວມວາຈາເປັນການດີ
ການສັງລວມໃຈເປັນການດີ
ການສັງລວມໃນທີ່ທັງປວງເປັນການດີ
ບຸກຄົນສັງລວມໃນທີ່ທັງປວງແລ້ວມີຄວາມລະອາຍຕໍ່ບາບ
ເຮົາກ່າວວ່າຖືຮັກສາຕົນ

**ອັດຕະຣັກຂິຕະສູດທີ ໕ ຈົບ**

## ໖. ອັບປະກະສູດ

### ວ່າດ້ວຍສັດມີຈຳນວນໜ້ອຍ

[໑໑໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ສັດເຫຼົ່າໃດໄດ້ໂພຄະຫຼວງຫຼາຍແລ້ວ ບໍ່ມົວເມົາ ບໍ່ຜະໝາດ ບໍ່ຕິດຢູ່ໃນກາມ ແລະບໍ່ປະພຶດຜິດໃນສັດທັງຫຼາຍ ສັດເຫຼົ່ານັ້ນ ມີຈຳນວນໜ້ອຍໃນໂລກ ສ່ວນສັດເຫຼົ່າໃດໄດ້ໂພຄະຫຼວງຫຼາຍແລ້ວ ມົວເມົາ ຜະໝາດ ຕິດຢູ່ໃນກາມແລະປະພຶດຜິດ ໃນສັດທັງຫຼາຍ ສັດເຫຼົ່ານັ້ນມີຈຳນວນຫຼາຍໃນໂລກ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ສັດເຫຼົ່າໃດ ໄດ້ໂພຄະຫຼວງຫຼາຍແລ້ວ ບໍ່ມົວເມົາ ບໍ່ຜະໝາດ ບໍ່ຕິດຢູ່ ໃນກາມແລະບໍ່ປະພຶດຜິດໃນສັດທັງຫຼາຍ ສັດເຫຼົ່ານັ້ນ ມີຈຳນວນໜ້ອຍໃນໂລກ ສ່ວນສັດເຫຼົ່າໃດໄດ້ໂພຄະຫຼວງຫຼາຍແລ້ວ ມົວເມົາ ຜະໝາດ ຕິດຢູ່ໃນກາມ ແລະ ປະພຶດຜິດໃນສັດທັງຫຼາຍ ສັດເຫຼົ່ານັ້ນມີຈຳນວນຫຼາຍໃນໂລກ

ພຣະຜູ້ມີພຣະພາກເຈົ້າ ໆລໆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ສັດທັງຫຼາຍເປັນຜູ້ກຳໜັດກ້າໃນໂພຄະທີ່ໜ້າຕ້ອງການ
ມັກຫຼາຍ ໝົກມຸ້ນໃນກາມ ບໍ່ຮູ້ສຶກໂຕວ່າໄດ້ລະເມີດຜູ້ອື່ນ
ຄືພວກຊີ້ນບໍ່ຮູ້ສຶກໂຕວ່າມີບ້ວງທີ່ເຂົາດັກໄວ້
ຜົນເຜັດຮ້ອນຍ່ອມມີແກ່ສັດພວກນັ້ນໃນພາຍຫຼັງ
ຍ້ອນກຳນັ້ນມີວິບາກຊົ່ວຊາມ

**ອັບປະກະສູດທີ ໖ ຈົບ**

# ໗. ອັດຖະກະຣະນະສູດ

## ວ່າດ້ວຍການກະທຳສິ່ງທີ່ເປັນປະໂຫຍດ

[໑໑໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ນັ່ງພິຈາລະນາຄະດີ ເຫັນຂັດຕິຍະມະຫາສານແດ່ ພາມມະນະມະຫາສານແດ່ ຄະຫະບໍດີມະຫາສານແດ່ ເຊິ່ງເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳແລະເງິນຫຼວງຫຼາຍ ມີຊັບເຄື່ອງພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດຫຼວງຫຼາຍ ກ່າວຕົວະທັງທີ່ຮູ້ຢູ່ ຍ້ອນການເປັນເຫດ ຍ້ອນການເປັນເຄົ້າມູນ ຍ້ອນການເປັນໂຕການ ຂ້ານ້ອຍໄດ້ມີຄວາມຄິດດັ່ງນີ້ວ່າ ບັດນີ້ ບໍ່ສົມຄວນທີ່ເຮົາຈະພິຈາລະນາຄະດີ (ຍ້ອນ) ບັດນີ້ ຣາຊະໂອຣົດນາມວ່າ ວິທູທະພະຜູ້ມີໜ້າຊື່ນບານ ຈັກມາພິຈາລະນາຄະດີ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ແມ່ນລາງພວກເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳແລະເງິນຫຼວງຫຼາຍ ມີຊັບເຄື່ອງພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດຫຼວງຫຼາຍ ກ່າວຕົວະທັງທີ່ຮູ້ຢູ່ ຍ້ອນການເປັນເຫດ ຍ້ອນການເປັນເຄົ້າມູນ ຍ້ອນການເປັນໂຕກາລ ຂໍ້ນັ້ນ ຈັກມີເພື່ອສິ່ງທີ່ບໍ່ເປັນປະໂຫຍດ ເກື້ອກູນ ເພື່ອຄວາມທຸກແກ່ພວກເຂົາຕະຫຼອດການລະນານ

ພຣະຜູ້ມີພຣະພາກເຈົ້າ ໆລໆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ສັດທັງຫຼາຍ ເປັນຜູ້ກຳໜັດກ້າໃນໂພຄະທີ່ໜ້າຕ້ອງການ
ມັກຫຼາຍ ໝົກມຸ້ນໃນກາມ ບໍ່ຮູ້ສຶກໂຕວ່າ ໄດ້ລະເມີດຜູ້ອື່ນ

ຄືຝູງປາບໍ່ຮູ້ສຶກໂຕວ່າມີເຄື່ອງດັກທີ່ເຂົາດັກໄວ້ ສັນນັ້ນ
ຜົນເຜັດຮ້ອນຍ່ອມມີແກ່ສັດພວກນັ້ນໃນພາຍຫຼັງ
ຍ້ອນກຳນັ້ນມີວິບາກຊົ່ວຊາມ

**ອັດຖະກະຣະນະສູດທີ ໗ ຈົບ**

# ໘. ມັນລິກາສູດ

## ວ່າດ້ວຍເລື້ອງພຣະນາງມັນລິກາເທວີ

[໑໑໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະເຈົ້າປະເສນທິໂກສົນກັບພຣະນາງມັນລິກາເທວີ ໄດ້ປະທັບຢູ່ໃນຜາສາດອັນປະເສີດຊັ້ນເທິງ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນໄດ້ຕັດຖາມພຣະນາງມັນລິກາເທວີ ດັ່ງນີ້ວ່າ ມັນລິກາ ຄົນອື່ນ ເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງນ້ອງມີແດ່ບໍ?

ພຣະນາງມັນລິກາເທວີໄດ້ທູນສະໜອງວ່າ ຂໍເດຊະຂ້າແດ່ ພຣະອົງ ຄົນອື່ນເຊິ່ງ ເປັນທີ່ຮັກຍິ່ງກວ່າຕົນຂອງຂ້ານ້ອຍບໍ່ມີເລີຍ ແລ້ວຄົນອື່ນ ເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງພຣະອົງມີຢູ່ບໍ?

ພຣະເຈົ້າປະເສນທິໂກສົນ ຕັດວ່າ ມັນລິກາ ຄົນອື່ນ ເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງເຮົາບໍ່ມີເລີຍ

ຕໍ່ມາ ພຣະເຈົ້າປະເສນທິໂກສົນສະເດັດລົງຈາກຜາສາດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມື້ນີ້ຂ້າພຣະອົງຢູ່ທີ່ຜາສາດອັນປະເສີດຊັ້ນເທິງກັບພຣະນາງມັນລິກາເທວີ ໄດ້ເວົ້າກັບພຣະນາງມັນລິກາເທວີດັ່ງນີ້ວ່າ ມັນລິກາ ຄົນອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງນ້ອງມີແດ່ບໍ? ເມື່ອຂ້າພຣະອົງຖາມແລ້ວແນວນີ້ ພຣະນາງມັນລິກາເທວີໄດ້ຕອບຂ້າພຣະອົງດັ່ງນີ້ວ່າ ຂໍເດຊະພຣະອົງ ຄົນອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງຂ້ານ້ອຍບໍ່ມີ ແລ້ວຄົນອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງພຣະອົງມີຢູ່ບໍ?

ເມື່ອພຣະນາງມັນລິກາເທວີຖາມແນວນີ້ ຂ້າພຣະອົງໄດ້ເວົ້າກັບພຣະນາງມັນລິກາເທວີດັ່ງນີ້ວ່າ ມັນລິກາ ຄົນອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງເຮົາບໍ່ມີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງໄດ້ຕັດຄາຖານີ້ໃນເວລານັ້ນວ່າ

ບຸກຄົນ ເຖິງຈະຕັ້ງໃຈຄົ້ນຫາທົ່ວທຸກທິດຢູ່ກໍຕາມ
ກໍບໍ່ພົບຄົນອື່ນ ເຊິ່ງເປັນທີ່ຮັກຍິ່ງກວ່າຕົນໄດ້ເລີຍ
ສັດເຫຼົ່າອື່ນກໍຮັກຕົນຫຼາຍເຊັ່ນນັ້ນຄືກັນ
ຍ້ອນແນວນັ້ນ ຜູ້ຮັກຕົນຈຶ່ງບໍ່ຄວນບຽດບຽນຜູ້ອື່ນ

**ມັນລິກາສູດທີ ໘ ຈົບ**

# ໙. ຍັນຍະສູດ

## ວ່າດ້ວຍການບູຊາຍັນ

[໑໒໐] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະເຈົ້າປະເສນທິໂກສົນໄດ້ກະກຽມການບູຊາມະຫາຍັນ ຄື ງົວເຖິກ ໕໐໐ ໂຕ ງົວເຖິກນ້ອຍ ໕໐໐ ໂຕ ງົວແມ່ນ້ອຍ ໕໐໐ ໂຕ ແບ້ ໕໐໐ ໂຕ ແລະ ແກະ ໕໐໐ ໂຕ ຖືກນໍາໄປມັດໄວ້ຕິດກັບຫຼັກເພື່ອບູຊາຍັນ ແມ່ນຂ້າຣາດຊະບໍຣິພານຂອງພຣະເຈົ້າປະເສນທິໂກສົນນັ້ນ ຜູ້ເປັນຂ້າທາດ ຄົນໃຊ້ ຫຼື ກໍາມະກອນທີ່ມີຢູ່ ແມ່ນຊົນເຫຼົ່ານັ້ນ ກໍຖືກອາດຍາຄຸກຄາມ ຖືກໄພຄຸກຄາມ ຮ້ອງໄຫ້ນໍ້າຕານອງໜ້າ ເຮັດບໍຣິກໍາຢູ່

ເມື່ອເວລາເຊົ້າ ພິກຂຸຈໍານວນຫຼາຍ ຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງ ຈາກສັນພັດຕາຫານສໍາເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມື້ນີ້ ພຣະເຈົ້າປະເສນທິໂກສົນ ໄດ້ກະກຽມການບູຊາມະຫາຍັນ ຄື ງົວເຖິກ ໕໐໐ ໂຕ ງົວເຖິກນ້ອຍ ໕໐໐ ໂຕ ງົວແມ່ນ້ອຍ ໕໐໐ ໂຕ ແບ້ ໕໐໐ ໂຕ ແລະ ແກະ ໕໐໐ ໂຕ ຖືກນໍາໄປມັດໄວ້ຕິດກັບຫຼັກເພື່ອບູຊາຍັນ ແມ່ນຂ້າຣາດຊະບໍຣິພານຂອງພຣະເຈົ້າປະເສນທິໂກສົນນັ້ນ ຜູ້ເປັນຂ້າທາດ ຄົນໃຊ້ ຫຼື ກໍາມະກອນທີ່ມີຢູ່ ແມ່ນຊົນເຫຼົ່ານັ້ນ ກໍຖືກອາດຍາຄຸກຄາມ ຖືກໄພຄຸກຄາມ ຮ້ອງໄຫ້ມີນໍ້າຕານອງໜ້າ ເຮັດບໍຣິກໍາຢູ່

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ ໃນເວລານັ້ນວ່າ

ມະຫາຍັນທີ່ມີກິຣິຍາຫຼາຍເຫຼົ່ານີ້ ຄື
ອັດສະວະເມທະ ປຸຣຸດເມທະ ສໍາມາປາສະ
ວາຊະເປີຍຍະ ນິຣັກຄະລະ ບໍ່ມີຜົນຫຼາຍ

(ຍ້ອນ) ພຣະອະຣິຍະຜູ້ປະຕິບັດຊອບສະແຫວງຫາຄຸນອັນຍິ່ງໃຫຍ່
ຍ່ອມບໍ່ກ່ຽວຂ້ອງກັບຍັນທີ່ມີການຂ້າແບ້
ແກະ ງົວ ແລະ ສັດຊະນິດຕ່າງ ໆ

ສ່ວນຍັນໃດ ບໍ່ມີກິຣິຍາ ເອື້ອອຳນວຍປະໂຫຍດ
ປະຊາຊົນບູຊາຕະກູນທຸກເມື່ອ
ຄື ບໍ່ມີການຂ້າແບ້ ແກະ ງົວ ແລະ ສັດຊະນິດຕ່າງ ໆ
ພຣະອະຣິຍະຜູ້ປະຕິບັດຊອບ ສະແຫວງຫາຄຸນອັນຍິ່ງໃຫຍ່
ຍ່ອມກ່ຽວຂ້ອງກັບຍັນນັ້ນ

ນັກປາດເພິ່ງບູຊາຍັນນັ້ນ ທີ່ມີຜົນຫຼາຍ
ຍ້ອນເມື່ອບູຊາຍັນນັ້ນ ໆ ແລ້ວ
ຍ່ອມມີແຕ່ຄວາມດີ ບໍ່ມີຄວາມຊົ່ວ
ຍັນຍ່ອມແຜ່ໄດ້ຫຼາຍ ແລະ ເທວະດາກໍເຫຼື້ອມໃສ໌

**ຍັນຍະສູດທີ ໙ ຈົບ**

## ໑໐. ພັນທະນະສູດ

### ວ່າດ້ວຍເຄື່ອງຄຸມຂັງ

[໑໘໑] ສະໄໝນັ້ນ ໝູ່ມະຫາຊົນຖືກພຣະເຈົ້າປະເສນທິໂກສົນໃຫ້ຄຸມຂັງໄວ້ແລ້ວ ລາງພວກ ຖືກຄຸມຂັງດ້ວຍເຊືອກ ລາງພວກຖືກຄຸມຂັງດ້ວຍຂື່ຄາ ລາງພວກຖືກຄຸມຂັງດ້ວຍໂສ້ ເມື່ອເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດ ໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ມື້ນີ້ໝູ່ມະຫາຊົນຖືກພຣະເຈົ້າປະເສນທິໂກສົນໃຫ້ຄຸມຂັງໄວ້ແລ້ວ ລາງພວກຖືກຄຸມຂັງດ້ວຍເຊືອກ ລາງພວກຖືກຄຸມຂັງດ້ວຍຂື່ຄາ ລາງພວກຖືກຄຸມຂັງດ້ວຍໂສ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ ໃນເວລານັ້ນ ວ່າ

ນັກປາດທັງຫຼາຍ ບໍ່ໄດ້ກ່າວເຖິງເຄື່ອງຄຸມຂັງ

ທີ່ເຮັດດ້ວຍເຫຼັກ ເຮັດດ້ວຍໄມ້ ແລະ ເຮັດດ້ວຍຫຍ້າ
ວ່າເປັນເຄື່ອງຄຸມຂັງທີ່ໝັ້ນຄົງ
ແຕ່ກ່າວເຖິງຄວາມກຳໜັດຍິນດີຫຼາຍໃນເຄື່ອງປະດັບແກ້ວມະນີ
ແລະຄວາມອາໄລໃນບຸດແລະພັນລະຍາທັງຫຼາຍ
ວ່າເປັນເຄື່ອງຄຸມຂັງທີ່ໝັ້ນຄົງ

ນັກປາດທັງຫຼາຍກ່າວເຖິງເຄື່ອງຄຸມຂັງ
ທີ່ມີຄວາມກຳໜັດຍິນດີຫຼາຍໃນເຄື່ອງປະດັບແກ້ວມະນີເປັນຕົ້ນນັ້ນ
ທີ່ບໍ່ແໜ້ນ ຢ່ອນຍານ ແຕ່ແກ້ໄດ້ຍາກ ວ່າເປັນເຄື່ອງຄຸມຂັງທີ່ໝັ້ນຄົງ
ທີ່ຣະຊິນຕັດເຄື່ອງຄຸມຂັງແນວນັ້ນໄດ້ແລ້ວອອກບວດ
ເປັນຜູ້ບໍ່ມີຄວາມອາໄລ ລະກາມສຸກໄດ້໌

**ພັນທະນະສູດທີ ໑໐ ຈົບ**

**ວັກທີ ໑ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

| | |
|---|---|
| ໑. ທະຫະຣະສູດ | ໒. ປຸຣິສະສູດ |
| ໓. ຊະຣາມໍຣະນະສູດ | ໔. ປີຍະສູດ |
| ໕. ອັດຕະຣັກຂິຕະສູດ | ໖. ອັບປະກະສູດ |
| ໗. ອັດຖະກະຣະນະສູດ | ໘. ມັນລິກາສູດ |
| ໙. ຍັນຍະສູດ | ໑໐. ພັນທະນະສູດ |

# ໔. ທຸຕິຍະວັກ

## ໝວດທີ ໔

## ໑. ສັດຕະຊະຕິລະສູດ

### ວ່າດ້ວຍຊະດິນ ໆ ຄົນ

[໑໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ບຸບພາຣາມ ຜາສາດຂອງນາງວິສາຂາມິຄາຣະມາຕາ ເຂດນະຄອນສາວັດຖີ ສະໄໝນັ້ນ ໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີບຫຼີກແລ້ວ ປະທັບນັ່ງທີ່ນອກຊຸ້ມປະຕູ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ

ສະໄໝນັ້ນ ຊະດິນ ໆ ຄົນ ນິຄົນ ໆ ຄົນ ອະເຈລະກະ ໆ ຄົນ ເອກະສາດົກ ໆ ຄົນປະຣິພາຊົກ ໆ ຄົນ ຜູ້ມີຂົນຂີ້ແຮ້ ເລັບ ແລະ ຂົນຍາວ ຖືເຄື່ອງບໍຣິຂານຕ່າງ ໆ ຍ່າງກາຍໄປໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ ທັນໃດນັ້ນ ພຣະເຈົ້າປະເສນທິໂກສົນ ໄດ້ສະເດັດລຸກຈາກທີ່ປະທັບ ຊົງຫົ່ມພຣະພູສາບ່ຽງພຣະອັງສາຂ້າງໜຶ່ງ ຊົງຈົດພຣະຊານຸມົນທົນເບື້ອງຂວາ ໃນພື້ນແຜ່ນດິນ ປະນົມມືໄປທາງຊະດິນ ໆ ຄົນ ນິຄົນ ໆ ຄົນ ອະເຈລະກະ ໆ ຄົນ ເອກະສາດົກ ໆ ຄົນ ປະຣິພາຊົກ ໆ ຄົນ ເຫຼົ່ານັ້ນແລ້ວ ຊົງປະກາດພຣະນາມ ໓ ຄັ້ງວ່າ ທ່ານຜູ້ຈະເລີນ ຂ້າພະເຈົ້າຄື ພຣະຣາຊາປະເສນທິໂກສົນ ໆລໆ ທ່ານຜູ້ຈະເລີນ ຂ້າພະເຈົ້າ ຄື ພຣະຣາຊາປະເສນທິໂກສົນ

ລຳດັບນັ້ນ ເມື່ອຊະດິນ ໆ ຄົນ ນິຄົນ ໆ ຄົນ ອະເຈລະກະ ໆ ຄົນ ເອກະສາດົກ ໆ ຄົນປະຣິພາຊົກ ໆ ຄົນ ເຫຼົ່ານັ້ນ ຍ່າງກາຍໄປໄດ້ບໍ່ດົນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພວກນັກບວດເຫຼົ່ານັ້ນຄົງເປັນພຣະອະຣະຫັນ ຫຼື ທ່ານຜູ້ບັນລຸອະຣະຫັຕຕະມັກເຫຼົ່າໃດເຫຼົ່າໜຶ່ງໃນໂລກ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ພຣະອົງເປັນຄະຫຼືຫັດບໍຣິໂພກກາມ ຄອບຄອງເຮືອນ ບັນທົມນອນບຽດພຣະໂອຣົດແລະພຣະຊາຍາ ທາຈຸນຈັນຂອງຫອມອັນນຳມາຈາກແຄວັນກາສີ ຊົງມາລາຂອງຫອມແລະເຄື່ອງລູບທາ ຍິນດີເງິນຄຳ ຍາກທີ່ຈະຮູ້ເລື້ອງນີ້ໄດ້ວ່າ ຄົນພວກນີ້ເປັນພຣະອະຣະຫັນ ຫຼື ວ່າ ຄົນພວກນີ້ບັນລຸອະຣະຫັຕຕະມັກໄດ້ແລ້ວ

ມະຫາບໍພິດ ສິນເພິ່ງຮູ້ໄດ້ດ້ວຍການຢູ່ຮ່ວມກັນ ສິນນັ້ນຈະເພິ່ງຮູ້ໄດ້ດ້ວຍການອັນຍາວນານ ບໍ່ແມ່ນ ດ້ວຍການເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຈະຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຈະຮູ້ໄດ້ ຜູ້ບໍ່ມີປັນຍາຮູ້ບໍ່ໄດ້

ມະຫາບໍພິດ ຄວາມສະອາດຈະເພິ່ງຮູ້ໄດ້ດ້ວຍການເຈລະຈາ ຄວາມສະອາດນັ້ນຈະເພິ່ງຮູ້ໄດ້ ດ້ວຍການລະນານ ບໍ່ແມ່ນດ້ວຍການເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຈະຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາ ຈຶ່ງຈະຮູ້ໄດ້ ຜູ້ບໍ່ມີປັນຍາຮູ້ບໍ່ໄດ້

ມະຫາບໍພິດ ກຳລັງຈະເພິ່ງຮູ້ໄດ້ໃນເວລາມີອັນຕະລາຍ ກຳລັງນັ້ນ ຈະເພິ່ງຮູ້ໄດ້ດ້ວຍການລະນານ ບໍ່ແມ່ນດ້ວຍການເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຈະຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຈະຮູ້ໄດ້ ຜູ້ບໍ່ມີປັນຍາຮູ້ບໍ່ໄດ້

ມະຫາບໍພິດ ປັນຍາຈະເພິ່ງຮູ້ໄດ້ດ້ວຍການສົນທະນາ ປັນຍານັ້ນຈະເພິ່ງຮູ້ໄດ້ດ້ວຍການອັນຍາວນານ ບໍ່ແມ່ນດ້ວຍການເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຈະຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຈະຮູ້ໄດ້ ຜູ້ບໍ່ມີປັນຍາຮູ້ບໍ່ໄດ້

ພຣະເຈົ້າປະເສນທິໂກສົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີແທ້ວ່າ ມະຫາບໍພິດ ພຣະອົງເປັນ ຄະຫຼືຫັດບໍຣິໂພກການ ໗ລ໗ ຍາກທີ່ຈະຮູ້ເລື້ອງນີ້ໄດ້ ໗ລ໗ ຜູ້ມີປັນຍາຈຶ່ງຈະຮູ້ໄດ້ ຜູ້ບໍ່ມີປັນຍາຮູ້ບໍ່ໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ນັກບວດເຫຼົ່ານັ້ນ ເປັນຄົນຂອງຂ້າພຣະອົງເອງ ເປັນບຸຣຸດສອດແນມ ເປັນສາຍລັບ ທ່ຽວສອດແນມໄປສູ່ຊົນນະບົດແລ້ວພາກັນກັບມາບອກ ຂ້າພຣະອົງຈະຮູ້ເລື່ອງຫຼັງຈາກທີ່ຄົນເຫຼົ່ານັ້ນສືບມາ ບັດນີ້ຄົນເຫຼົ່ານັ້ນ ຄົງຈະຊຳຣະລ້າງຝຸ່ນແລ້ວ ອາບນໍ້າສະອາດດີ ລູບທາຜິວດີແລ້ວ ແຕ່ງຜົມແລະໜວດ ນຸ່ງຫົ່ມຜ້າຂາວ ເອີບອີ່ມ ພຽບພ້ອມດ້ວຍການມະຄຸນ ໕ ປົນເປີຂ້າພຣະອົງຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມນີ້ແລ້ວ ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ ໃນເວລານັ້ນວ່າ

ຄົນຜູ້ຮູ້ດີ ບໍ່ຄວນໄວ້ວາງໃຈໃຜຍ້ອນຜິວພັນແລະຮູບຮ່າງ  
ບໍ່ຄວນໄວ້ວາງໃຈໃຜຍ້ອນການເຫັນກັນພຽງປຶດດຽວ  
ຍ້ອນວ່າຍັງມີນັກບວດຜູ້ບໍ່ສັງລວມທັງຫຼາຍທ່ຽວໄປໃນໂລກນີ້ຢູ່  
ດ້ວຍເຄື່ອງບໍຣິຂານຂອງເຫຼົ່ານັກບວດຜູ້ສັງລວມດີແລ້ວ  
ນັກບວດເຫຼົ່ານັ້ນຜູ້ບໍ່ບໍລິສຸດໃນພາຍໃນ

ງາມແຕ່ພາຍນອກ ອ້ອມລ້ອມດ້ວຍບໍລິວານທ່ອງທ່ຽວຢູ່ໃນໂລກ
ຄືຕຸ້ມຫູດິນແລະຫຼຽນໂລຫະເຄິ່ງມາສົກຫຸ້ມດ້ວຍຄຳປອມໄວ້

**ສັດຕະຊະຕິລະສູດທີ ໑ ຈົບ**

# ໘. ປັນຈະຣາຊະສູດ

## ວ່າດ້ວຍພຣະຣາຊາ ໕ ພຣະອົງ

[໑໘໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະຣາຊາ ໕ ພຣະອົງ ມີພຣະເຈົ້າປະເສນທິໂກສົນຊົງເປັນປະມຸກຜູ້ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ໄດ້ຮັບປົນເປີຢູ່ ມີຄຳຖາມເກີດຂຶ້ນໃນລະຫວ່າງການສົນທະນາກັນວ່າ ອັນໃດ? ເປັນຍອດແຫ່ງກາມທັງຫຼາຍ

ບັນດາພຣະຣາຊາເຫຼົ່ານັ້ນ ບາງພຣະອົງຕັດແນວນີ້ວ່າ ຮູບເປັນຍອດແຫ່ງກາມທັງຫຼາຍ

ບາງພຣະອົງຕັດແນວນີ້ວ່າ ສຽງ ເປັນຍອດແຫ່ງກາມທັງຫຼາຍ
ບາງພຣະອົງຕັດແນວນີ້ວ່າ ກິ່ນ ເປັນຍອດແຫ່ງກາມທັງຫຼາຍ
ບາງພຣະອົງຕັດແນວນີ້ວ່າ ຣົດ ເປັນຍອດແຫ່ງກາມທັງຫຼາຍ
ບາງພຣະອົງຕັດແນວນີ້ວ່າ ໂຜດຖັບພະ ເປັນຍອດແຫ່ງກາມທັງຫຼາຍ

ໃນຂະນະນັ້ນ ພຣະຣາຊາເຫຼົ່ານັ້ນ ບໍ່ອາດຈະຕົກລົງກັນໄດ້ ພຣະເຈົ້າປະເສນທິໂກສົນຈຶ່ງໄດ້ຕັດກັບພຣະຣາຊາເຫຼົ່ານັ້ນດັ່ງນີ້ວ່າ ມາເທີ້ນທ່ານຜູ້ນິຣະທຸກທັງຫຼາຍ ພວກເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ທູນຖາມຄວາມຂໍ້ນີ້ກັບພຣະອົງ ພຣະອົງຊົງພະຍາກອນແກ່ພວກເຮົາໄວ້ແນວໃດ? ພວກເຮົາກໍຈັກຈື່ຄຳພະຍາກອນນັ້ນໄວ້ແນວນັ້ນ ພຣະຣາຊາເຫຼົ່ານັ້ນ ຊົງຮັບພຣະດຳຣັດຂອງພຣະເຈົ້າປະເສນທິໂກສົນແລ້ວ

ຕໍ່ມາ ພຣະຣາຊາ ໕ ພຣະອົງນັ້ນ ມີພຣະເຈົ້າປະເສນທິໂກສົນຊົງເປັນປະມຸກ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະເຈົ້າປະເສນທິໂກສົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍໃນບ່ອນນີ້ ເປັນຣາຊາທັງ ໕ ອົງ ເອີບອີ່ມ ພຽບພ້ອມດ້ວຍກາມມະຄຸນ ໕ ໄດ້ຮັບການປົນເປີຢູ່ ມີຄຳຖາມເກີດຂຶ້ນໃນລະຫວ່າງການສົນທະນາກັນນັ້ນວ່າ ອັນໃດເປັນຍອດແຫ່ງກາມທັງຫຼາຍ?

ບາງພຣະອົງຕັດແນວນີ້ວ່າ ຮູບ ເປັນຍອດແຫ່ງກາມທັງຫຼາຍ
ບາງພຣະອົງຕັດແນວນີ້ວ່າ ສຽງ ເປັນຍອດແຫ່ງກາມທັງຫຼາຍ
ບາງພຣະອົງຕັດແນວນີ້ວ່າ ກິ່ນ ເປັນຍອດແຫ່ງກາມທັງຫຼາຍ
ບາງພຣະອົງຕັດແນວນີ້ວ່າ ຣົດ ເປັນຍອດແຫ່ງກາມທັງຫຼາຍ
ບາງພຣະອົງຕັດແນວນີ້ວ່າ ໂຜດຖັບພະ ເປັນຍອດແຫ່ງກາມທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດເປັນຍອດແຫ່ງກາມທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ທີ່ສຸດແຫ່ງຄວາມພໍໃຈນັ້ນ ອາຕະມາພາບກ່າວວ່າ ເປັນຍອດໃນກາມມະຄຸນ ໕ ຮູບເຫຼົ່າໃດເປັນທີ່ພໍໃຈຂອງຄົນລາງຄົນ ຮູບເຫຼົ່ານັ້ນບໍ່ເປັນທີ່ພໍໃຈຂອງຄົນລາງຄົນ ເຂົາພໍໃຈ ມີຄວາມດຳຣິເຕັມຮອບດ້ວຍຮູບເຫຼົ່າໃດ ຮູບອື່ນຈາກຮູບເຫຼົ່ານັ້ນຈະຍິ່ງກວ່າ ຫຼື ປະນີດກວ່າ ເຂົາກໍບໍ່ປາຖະໜາ ຮູບເຫຼົ່ານັ້ນ ເປັນຮູບທີ່ດີຍິ່ງສຳລັບເຂົາ ຮູບເຫຼົ່ານັ້ນ ເປັນຮູບປະເສີດສຸດສຳລັບເຂົາ

ມະຫາບໍພິດ ສຽງ ເຫຼົ່າໃດຯລຯ
ມະຫາບໍພິດ ກິ່ນ ເຫຼົ່າໃດຯລຯ
ມະຫາບໍພິດ ຣົດ ເຫຼົ່າໃດຯລຯ

ມະຫາບໍພິດ ໂຜດຖັບພະເຫຼົ່າໃດເປັນທີ່ພໍໃຈຂອງຄົນລາງຄົນ ໂຜດຖັບພະເຫຼົ່ານັ້ນບໍ່ເປັນທີ່ພໍໃຈຂອງຄົນລາງຄົນ ເຂົາພໍໃຈ ມີຄວາມດຳຣິເຕັມຮອບດ້ວຍໂຜດຖັບພະເຫຼົ່າໃດ ໂຜດຖັບພະອື່ນຈາກໂຜດຖັບພະເຫຼົ່ານັ້ນຈະຍິ່ງກວ່າ ຫຼື ປະນີດກວ່າ ເຂົາກໍບໍ່ປາຖະໜາ ໂຜດຖັບພະເຫຼົ່ານັ້ນເປັນໂຜດຖັບພະທີ່ດີຍິ່ງສຳລັບເຂົາ ໂຜດຖັບພະເຫຼົ່ານັ້ນ ເປັນໂຜດຖັບພະປະເສີດສຸດສຳລັບເຂົາ

ສະໄໝນັ້ນ ຈັນທະນັງຄະລິກອຸປາສົກນັ່ງຢູ່ໃນບໍລິສັດນັ້ນ ລຳດັບນັ້ນ ຈັນທະນັງຄະລິກອຸປາສົກ ລຸກຈາກບ່ອນນັ່ງ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເຫດແນວໜຶ່ງຜາກົດ ແກ່ຂ້າພຣະອົງ ຂ້າແດ່ ພຣະສຸຄົຕ ເຫດແນວໜຶ່ງຜາກົດແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ຈັນທະນັງຄລິກະ ເຫດນັ້ນ ຈົ່ງຜາກົດແກ່ທ່ານເທີ້ນ

ລຳດັບນັ້ນ ຈັນທະນັງຄະລິກອຸປາສົກໄດ້ສັນເສີນພຣະຜູ້ມີພຣະພາກເຈົ້າ ສະເພາະພຣະພັກ ດ້ວຍຄາຖາທີ່ສົມຄວນແກ່ເຫດນັ້ນ ວ່າ

ດອກບົວຫຼວງຊື່ ໂກກະນຸດ ບານໃນເວລາເຊົ້າ
ຍັງບໍ່ໝົດກິ່ນ ຍັງຫອມຢູ່ ສັນໃດ

ທ່ານຈຶ່ງເບິ່ງພຣະອັງຄີຣົດ ຜູ້ຮຸ່ງເຮືອງຢູ່
ຄືດວງອາທິດຮຸ່ງເຮືອງຢູ່ໃນອາກາດ ສັນນັ້ນ

ລຳດັບນັ້ນ ພຣະຣາຊາ ໕ ພຣະອົງນັ້ນ ຊົງໃຫ້ຈັນທະນັງຄະລິກອຸປາສົກຫົ່ມຜ້າ ໕ ຜືນ ທັນໃດນັ້ນ ຈັນທະນັງຄະລິກອຸປາສົກກໍຖວາຍໃຫ້ພຣະຜູ້ມີພຣະພາກເຈົ້າຊົງຫົ່ມຜ້າ ໕ ຜືນເຫຼົ່ານັ້ນ

**ປັນຈະຣາຊະສູດທີ ໘ ຈົບ**

# ໙. ໂທນະປາກະສູດ

## ວ່າດ້ວຍການຫຸງເຂົ້າສານໂອໜຶ່ງ

[໑໒໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະເຈົ້າປະເສນທິໂກສົນສະເຫວີຍພຣະກະຍາຫານທີ່ຫຸງດ້ວຍເຂົ້າສານໂອໜຶ່ງ ຊົງອຶດອັດ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ວ່າ ພຣະເຈົ້າປະເສນທິໂກສົນ ສະເຫວີຍແລ້ວຊົງອຶດອັດ ຈຶ່ງໄດ້ຕັດຄາຖານີ້ໃນເວລານັ້ນ ວ່າ

ມະນຸດຜູ້ມີສະຕິຢູ່ທຸກເມື່ອ
ຮູ້ຈັກປະມານໃນໂພຊະນະທີ່ໄດ້ແລ້ວ
ຍ່ອມມີເວທະນາເບົາບາງ
ເຂົາຍ່ອມແກ່ຊ້າ ອາຍຸກໍໝັ້ນຍືນ

ສະໄໝນັ້ນ ມານົບຊື່ສຸທັດສະນະ ຢືນຢູ່ເບື້ອງພຣະປຣິດສະດາງຂອງພຣະເຈົ້າປະເສນທິໂກສົນ ພຣະເຈົ້າປະເສນທິໂກສົນ ຮັບສັ່ງຮຽກສຸທັດສະນະມານົບມາຕັດວ່າ ມານີ້ສຸທັດສະນະເຈົ້າຈົ່ງຮຽນຄາຖາໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ແລ້ວຈົ່ງກັບມາກ່າວໃນເວລາທີ່ເຮົາສະເຫວີຍກະຍາຫານຢູ່ ເຮົາຈະໃຫ້ຄ່າອາຫານແກ່ເຈົ້າມື້ລະ ໑໐໐ ກະຫາປະນະ

ສຸທັດສະນະມານົບຮັບສະໜອງພຣະດຳຣັດ ພຣະເຈົ້າປະເສນທິໂກສົນວ່າ ເປັນພຣະມະຫາກະລຸນາຢ່າງຍິ່ງ ໂດຍຂ້ານ້ອຍ ແລ້ວຮຽນຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວກ່າວໃນເວລາທີ່ພຣະເຈົ້າປະເສນທິໂກສົນ ສະເຫວີຍພຣະກະຍາຫານຢູ່ວ່າ

ມະນຸດຜູ້ມີສະຕິຢູ່ທຸກເມື່ອ

ຮູ້ຈັກປະມານໃນໂພຊະນະທີ່ໄດ້ແລ້ວ
ຍ່ອມມີເວທະນາເບົາບາງ
ເຂົາຍ່ອມແກ່ຊ້າ ອາຍຸກໍໝັ້ນຍືນ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ຊົງດຳລົງຢູ່ໄດ້ໂດຍສະເຫວີຍພຣະກະຍາຫານໂອທະນະໜຶ່ງ ຫຼາຍສຸດເລື້ອຍມາ ຕໍ່ມາພຣະເຈົ້າປະເສນທິໂກສົນ ມີພຣະວໍຣະກາຍເບົາ ຊົງລູບພຣະວໍຣະກາຍດ້ວຍຝາພຣະຫັດ ຊົງເປ່ງອຸທານນີ້ໃນເວລານັ້ນວ່າ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງອະນຸເຄາະເຮົາດ້ວຍປະໂຫຍດທັງສອງ ຄື ປະໂຫຍດໃນປັດຈຸບັນ ແລະ ປະໂຫຍດໃນພາຍໜ້າຢ່າງແທ້ຈິງ

**ໂທນະປາກະສູດທີ ៦ ຈົບ**

# ៨. ປະຖົມສັງຄາມະສູດ

## ວ່າດ້ວຍສົງຄາມ ສູດທີ ໑

[໑໒໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາ ຍົກໄປຮຸກຮານພຣະເຈົ້າປະເສນທິໂກສົນທາງແຄວ້ນກາສີ ພຣະເຈົ້າປະເສນທິໂກສົນຊົງສະດັບຂ່າວວ່າ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາຍົກມາຮຸກຮານເຮົາທາງແຄວ້ນກາສີ ຈຶ່ງຊົງຈັດຈະຕຸຣົງຄິນີເສນາ ຍົກອອກໄປຕໍ່ສູ້ກັບພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ປ້ອງກັນແຄວ້ນກາສີ ຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ກັບພຣະເຈົ້າປະເສນທິໂກສົນ ຊົງເຮັດສົງຄາມຕໍ່ກັນ

ສົງຄາມໃນຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຊະນະພຣະເຈົ້າປະເສນທິໂກສົນ ຝ່າຍພຣະເຈົ້າປະເສນທິໂກສົນຜູ້ປຣາໄຊ ກໍສະເດັດລ່າທັບກັບນະຄອນສາວັດຖີ ຣາດຊະທານີຂອງພຣະອົງ

ເມື່ອເວລາເຊົ້າ ພິກຂຸຈຳນວນຫຼາຍ ຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນກຣຸງສາວັດຖີ ກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາ ຍົກມາຮຸກຮານພຣະເຈົ້າປະເສນທິໂກສົນທາງແຄວ້ນກາສີ ພຣະເຈົ້າປະເສນທິໂກສົນ ຊົງສະດັບຂ່າວວ່າ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາ ຍົກມາຮຸກຮານເຮົາທາງແຄວ້ນກາສີ ຈຶ່ງຊົງຈັດຈະຕຸຣົງຄິນີເສນາ ຍົກອອກໄປຕໍ່ສູ້ກັບພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ປ້ອງກັນແຄວ້ນກາສີ ຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ກັບພຣະເຈົ້າປະເສນທິໂກສົນ ຊົງເຮັດສົງຄາມຕໍ່ກັນ

ສົງຄາມຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຊະນະພຣະເຈົ້າປະເສນທິໂກສົນ ຝ່າຍພຣະເຈົ້າປະເສນທິໂກສົນຜູ້ປຣາໄຊ ກໍສະເດັດລ່າທັບກັບນະຄອນ ສາວັດຖີ ຣາດຊະທານີຂອງພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພິກຂຸທັງຫຼາຍ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ມີມິດຊົ່ວ ມີສະຫາຍຊົ່ວ ມີເພື່ອນຊົ່ວ ຝ່າຍພຣະເຈົ້າປະເສນທິໂກສົນ ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ມື້ນີ້ ພຣະເຈົ້າປະເສນທິໂກສົນຊົງປຣາໄຊມາແລ້ວ ແນວນີ້ ຈັກບັນທົມເປັນທຸກຕະຫຼອດຣາຕີນີ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ໗ລ໗ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຜູ້ຊະນະຍ່ອມກໍ່ເວນ ຜູ້ປຣາໄຊຍ່ອມນອນເປັນທຸກ
ຜູ້ລະທັງຄວາມຊະນະແລະຄວາມປຣາໄຊໄດ້ແລ້ວ
ມີໃຈສະງົບ ຍ່ອມນອນເປັນສຸກ

**ປະຖົມສັງຄາມະສູດທີ ໔ ຈົບ**

# ໕. ທຸຕິຍະສັງຄາມະສູດ

## ວ່າດ້ວຍສົງຄາມ ສູດທີ ໔

[໑໔໖] ຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາ ຍົກໄປຮຸກຮານພຣະເຈົ້າປະເສນທິໂກສົນທາງແຄວ້ນກາສີ ພຣະເຈົ້າປະເສນທິໂກສົນ ຊົງສະດັບຂ່າວວ່າ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາ ຍົກມາຮຸກຮານເຮົາທາງແຄວ້ນກາສີ ຈຶ່ງຊົງຈັດຈະຕຸຣົງຄິນີເສນາ ຍົກອອກໄປຕໍ່ສູ້ກັບ

ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ປ້ອງກັນແຄວ້ນກາສີ ຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ກັບພຣະເຈົ້າປະເສນທິໂກສົນຊົງເຮັດສົງຄາມ ຕໍ່ກັນ

ສົງຄາມຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ຊົງຊະນະພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ແລະໄດ້ຈັບເປັນຊະເລີຍເສິກ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນໄດ້ມີ ພຣະດໍາຣິດັ່ງນີ້ວ່າ ເຖິງແມ່ນພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດນີ້ ຈະປະທຸດສະຮ້າຍເຮົາຜູ້ບໍ່ໄດ້ປະທຸດສະຮ້າຍ ແຕ່ທ່ານກໍຍັງເປັນຫລານຂອງເຮົາ ທາງທີ່ດີເຮົາຄວນຢຶດພົນຊ້າງ ພົນມ້າ ພົນລົດ ແລະ ພົນຍ່າງທັງໝົດຂອງພຣະເຈົ້າອະຊາດສັດຕູ ເວເທຫິບຸດຜູ້ຄອງແຄວ້ນມະຄົດແລ້ວປ່ອຍພຣະອົງໃຫ້ລອດຊີວິດໄປ

ເມື່ອເວລາເຊົ້າ ພິກຂຸຈໍານວນຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນ ທ່ຽວໄປບິນທະບາດໃນກຣຸງສາວັດຖີ ກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສໍາເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ພິກຂຸທັງຫຼາຍ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາ ຍົກມາ ຮຸກຮານພຣະເຈົ້າປະເສນທິໂກສົນທາງແຄວ້ນກາສີ ພຣະເຈົ້າປະເສນທິໂກສົນຊົງສະດັບຂ່າວວ່າ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ຊົງຈັດຈະຕຸຣົງຄິນີເສນາ ຍົກມາຮຸກຮານເຮົາທາງແຄວ້ນກາສີຈຶ່ງຊົງຈັດຈະຕຸຣົງຄິນີເສນາ ຍົກອອກໄປຕໍ່ສູ້ກັບພຣະເຈົ້າອະຊາຕສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ປ້ອງກັນແຄວ້ນກາສີ ຄັ້ງນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ກັບພຣະເຈົ້າປະເສນທິໂກສົນ ຊົງເຮັດສົງຄາມຕໍ່ກັນ

ສົງຄາມຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຊົງຊະນະພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ແລະໄດ້ຈັບເປັນຊະເລີຍເສິກ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນໄດ້ມີພຣະດໍາຣິດັ່ງນີ້ວ່າ ເຖິງແມ່ນພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດນີ້ ຈະປະທຸດສະຮ້າຍເຮົາ ຜູ້ບໍ່ໄດ້ປະທຸດສະຮ້າຍ ແຕ່ທ່ານກໍຍັງເປັນຫລານຂອງເຮົາ ທາງທີ່ດີເຮົາຄວນຢຶດພົນຊ້າງ ພົນມ້າ ພົນລົດແລະພົນຍ່າງທັງໝົດຂອງພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ແລ້ວປ່ອຍພຣະອົງໃຫ້ລອດຊີວິດໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ລໍາດັບນັ້ນ ພຣະເຈົ້າປະເສນທິໂກສົນຊົງຢຶດພົນຊ້າງ ພົນມ້າ ພົນລົດ ແລະ ພົນຍ່າງທັງໝົດຂອງພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຜູ້ຄອງແຄວ້ນມະຄົດ ແລ້ວຊົງປ່ອຍພຣະອົງໃຫ້ລອດຊີວິດໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນີ້ແລ້ວ ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ໃນເວລານັ້ນ ວ່າ

ຄົນຈະແຍ່ງຊີງໄດ້ ທໍ່ທີ່ການແຍ່ງຊີງນັ້ນຈະເປັນໄປໄດ້
ແຕ່ເມື່ອໃດຄົນເຫຼົ່າອື່ນມາແຍ່ງຊີງແດ່
ເມື່ອນັ້ນ ຜູ້ແຍ່ງຊີງນັ້ນ ກໍກັບຖືກເຂົາແຍ່ງຊີງໄປ
ຍ້ອນວ່າບາບຍັງບໍ່ໃຫ້ຜົນພຽງໃດ
ຄົນພານຍ່ອມສຳຄັນບາບວ່າເປັນຂອງດີພຽງນັ້ນ

ແຕ່ເມື່ອໃດບາບໃຫ້ຜົນ ເມື່ອນັ້ນ ຄົນພານຍ່ອມປະສົບທຸກ
ຜູ້ຂ້າຍ່ອມໄດ້ຮັບການຂ້າຕອບ ຜູ້ຊະນະຍ່ອມໄດ້ຮັບການຊະນະຕອບ
ຜູ້ດ່າຍ່ອມໄດ້ຮັບການດ່າຕອບ ແລະ ຜູ້ໂກດຍ່ອມໄດ້ຮັບການໂກດຕອບ
ຍ້ອນເມື່ອກຳໃຫ້ຜົນ ຜູ້ແຍ່ງຊີງນັ້ນ ຍ່ອມຖືກເຂົາແຍ່ງຊີງໄປ

**ທຸຕິຍະສັງຄາມະສູດທີ ໕ ຈົບ**

# ໖. ທີຕຸສູດ

## ວ່າດ້ວຍພຣະທິດາ

[໑໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ລຳດັບນັ້ນ ບຸຣຸດຄົນໜຶ່ງເຂົ້າໄປເຝົ້າພຣະເຈົ້າປະເສນທິໂກສົນ ຮອດບ່ອນຢູ່ແລ້ວ ຂາບທູນໃນບ່ອນໃກ້ພຣະກັນຂອງພຣະເຈົ້າປະເສນທິໂກສົນ ວ່າ ຂໍເດຊະພຣະອົງ ພຣະນາງມັນລິກາເທວີປະສູດພຣະທິດາແລ້ວ ເມື່ອຣາຊະບຸຣຸດຂາບທູນແນວນີ້ແລ້ວ ພຣະເຈົ້າປະເສນທິໂກສົນ ກໍບໍ່ຊົງເບີກບານພຣະຫະໄທ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ພຣະເຈົ້າປະເສນທິໂກສົນບໍ່ຊົງເບີກບານ ພຣະຫະໄທ ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ ໃນເວລານັ້ນ ວ່າ

ມະຫາບໍພິດຜູ້ເປັນໃຫຍ່ກວ່າປວງຊົນ
ແທ້ຈິງ ແມ່ນຍິງລາງຄົນກໍຍັງດີກວ່າ
ຂໍພຣະອົງຈົ່ງຊຸບລ້ຽງໄວ້ເທີ້ນ
ຍິງຜູ້ມີປັນຍາ ມີສິນ ບຳລຸງແມ່ຜົວພໍ່ຜົວຄືເທວະດາ

ຈຶ່ງຮັກພັກດີຕໍ່ສາມີ ຍັງມີຢູ່
ບຸຣຸດທີ່ເກີດຈາກຍິງນັ້ນຍ່ອມແກ່ກ້າ ເປັນໃຫຍ່ໃນທິດໄດ້
ບຸດຂອງພັນລະຍາດີເຊັ່ນນັ້ນ ຄອງຣາດຊະສົມບັດໄດ້

**ທີຕຸສູດທີ ໖ ຈົບ**

# ໗. ປະຖົມອັປປະມາທະສູດ

## ວ່າດ້ວຍຄວາມບໍ່ຜະໝາດ ສູດທີ ໑

[໑໒໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນ ປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳແນວໜຶ່ງທີ່ຢຶດປະໂຫຍດທັງສອງໄວ້ໄດ້ ຄື ປະໂຫຍດໃນປັດຈຸບັນ ແລະ ປະໂຫຍດໃນພາຍໜ້າ ມີຢູ່ບໍ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ທຳແນວໜຶ່ງທີ່ຢຶດປະໂຫຍດທັງສອງໄວ້ໄດ້ ຄື ປະໂຫຍດໃນປັດຈຸບັນນີ້ ແລະ ປະໂຫຍດໃນພາຍໜ້າ ມີຢູ່

ພຣະເຈົ້າປະເສນທິໂກສົນ ທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳແນວໜຶ່ງທີ່ຢຶດປະໂຫຍດທັງສອງໄວ້ໄດ້ ຄື ປະໂຫຍດໃນປັດຈຸບັນນີ້ ແລະ ປະໂຫຍດໃນພາຍໜ້າ ຄືອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ທຳແນວໜຶ່ງທີ່ຢຶດປະໂຫຍດໃນປັດຈຸບັນແລະປະໂຫຍດໃນພາຍໜ້າໄວ້ໄດ້ ຄື ຄວາມບໍ່ຜະໝາດ ຮອຍຕີນຂອງສັດທັງຫຼາຍທີ່ສັນຈອນໄປເທິງແຜ່ນດິນຊະນິດໃດຊະນິດໜຶ່ງ ຮອຍຕີນເຫຼົ່ານັ້ນທັງໝົດ ຍ່ອມລວມລົງໄດ້ໃນຮອຍຕີນຊ້າງ ບັນດິດກ່າວວ່າ ຮອຍຕີນຊ້າງເປັນເລີດກວ່າຮອຍຕີນເຫຼົ່ານັ້ນ ຍ້ອນເປັນຮອຍໃຫຍ່ ສັນໃດ ມະຫາບໍພິດ ທຳແນວໜຶ່ງທີ່ຢຶດປະໂຫຍດທັງສອງໄວ້ໄດ້ ຄື ປະໂຫຍດໃນປັດຈຸບັນແລະປະໂຫຍດໃນພາຍໜ້າ ຄື ຄວາມບໍ່ຜະໝາດ ກໍສັນນັ້ນ

ພຣະຜູ້ມີພຣະພາກເຈົ້າ ໆລໆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ບຸກຄົນເມື່ອປາຖະໜາອາຍຸ ຄວາມບໍ່ມີພະຍາດ
ວັນນະ ສະຫວັນ ຄວາມເກີດໃນຕະກູນສູງ
ແລະຄວາມຍິນດີຢ່າງມະໂຫລານຕໍ່ ໆ ໄປ
ເພິ່ງທຳຄວາມບໍ່ຜະໝາດ

ບັນດິດທັງຫຼາຍຍ່ອມສັນເສີນ
ຄວາມບໍ່ພະໝາດໃນການທຳບຸນ
ບັນດິດຜູ້ບໍ່ພະໝາດຍ່ອມບັນລຸປະໂຫຍດທັງສອງ

ທີ່ຣະຊົນທ່ານຮຽກວ່າ ບັນດິດ
ຍ້ອນຍຶດປະໂຫຍດທັງສອງໄວ້ໄດ້ ຄື
ປະໂຫຍດໃນປັດຈຸບັນແລະປະໂຫຍດໃນພາຍໜ້າ

**ປະຖົມອັບປະມາທະສູດທີ ໗ ຈົບ**

## ๘. ທຸຕິຍະອັບປະມາທະສູດ

### ວ່າດ້ວຍຄວາມບໍ່ພະໝາດ ສູດທີ ໘

[໑໘໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນ ປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມຄິດຄຳນຶງເກີດຂຶ້ນແກ່ຂ້າພຣະອົງຜູ້ຫຼີບຫຼີກຢູ່ ໃນບ່ອນສະງັດແນວນີ້ວ່າ ທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວນັ້ນເອງ ເປັນທຳສຳລັບຜູ້ມີມິດດີ[໑] ມີສະຫາຍດີ[໒] ມີເພື່ອນດີ[໓] ບໍ່ແມ່ນສຳລັບຜູ້ມີມິດຊົ່ວ ມີສະຫາຍຊົ່ວ ມີເພື່ອນຊົ່ວ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ທຳທີ່ອາຕະມາພາບກ່າວໄວ້ດີແລ້ວນັ້ນແລ ເປັນທຳສຳລັບຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ບໍ່ແມ່ນສຳລັບຜູ້ມີມິດຊົ່ວ ມີສະຫາຍຊົ່ວ ມີເພື່ອນຊົ່ວ ມະຫາບໍພິດ ຄັ້ງໜຶ່ງ ອາຕະມາພາບຢູ່ທີ່ນິຄົມຂອງໝູ່ເຈົ້າສາກະຍະ ຊື່ວ່ານ ຄອນກະ ໃນແຄວ້ນສັກກະ ຄັ້ງນັ້ນ ພິກຂຸອານົນເຂົ້າໄປຫາອາຕະມາພາບຮອດບ່ອນຢູ່ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ມະຫາບໍພິດໄດ້ກ່າວກັບອາຕະມາພາບ ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນ ເຄິ່ງໜຶ່ງ

ອາຕະມາພາບກ່າວວ່າ ຢ່າກ່າວແນວນັ້ນ ອານົນ ຢ່າກ່າວແນວນັ້ນ ອານົນ ແທ້ຈິງແລ້ວຄວາມ ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນ[໑]ທັງໝົດຢ່າງແນ່ນອນ ອານົນ ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກ ມີອົງ ๘ ເຮັດອະຣິຍະມັກມີອົງ ๘ ໃຫ້ຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ (ຄວາມສະຫງັດ) ອາໄສວິຣາຄະ (ຄວາມຄາຍກຳໜັດ) ອາໄສນິໂຣທະ (ຄວາມດັບ) ນ້ອມໄປໃນໂວດສັກຄະ (ຄວາມສະລະ)

໒. ຈະເລີນສຳມາ ສັງກັບປະ ຯລຯ

໓. ຈະເລີນສຳມາ ວາຈາ ຯລຯ

໔. ຈະເລີນສຳມາ ກຳມັນຕະ ຯລຯ

໕. ຈະເລີນສຳມາ ອາຊີວະ ຯລຯ

໖. ຈະເລີນສຳມາ ວາຍາມະ ຯລຯ

໗. ຈະເລີນສຳມາ ສະຕິ ຯລຯ

໘. ຈະເລີນສຳມາ ສະມາທິ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ນ້ອມໄປໃນໂວດສັກຄະ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍແນວນີ້ແລ

ອັນໜຶ່ງ ຂໍ້ທີ່ວ່າຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນ ທັງໝົດຢ່າງແນ່ນອນນັ້ນ ເພິ່ງຮູ້ໂດຍປະຣິຍາຍນີ້ ດ້ວຍວ່າ ເຫຼົ່າສັດຜູ້ມີຊາດ (ຄວາມເກີດ) ເປັນທຳມະດາ ຍ່ອມພົ້ນຈາກຊາດ ຜູ້ມີຊະຣາ (ຄວາມແກ່) ເປັນທຳມະດາ ຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະ (ຄວາມຕາຍ) ເປັນທຳມະດາ ຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເປັນທຳມະດາ ຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດ ຍ້ອນອາໄສເຮົາຜູ້ເປັນມິດດີ

ອານົນ ຂໍ້ທີ່ວ່າ ຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດຢ່າງແນ່ນອນນັ້ນ ເພິ່ງຮູ້ໂດຍປະຣິຍາຍນີ້ແລ

ຍ້ອນເຫດນັ້ນແລ ມະຫາບໍພິດ ພຣະອົງເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາຈັກເປັນຜູ້ ມີມິດດີ ມີສະຫາຍດີ ມີເພື່ອນດີ ພຣະອົງຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງອາໄສ ທຳແນວໜຶ່ງນີ້ ຄືຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍຢູ່ເທີ້ນ

ມະຫາບໍພິດ ເມື່ອພຣະອົງບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ນາງສະໜົມຜູ້ ຕາມສະເດັດຈັກມີຄວາມຄິດແນວນີ້ວ່າ ພຣະຣາຊາເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ຖ້າຈັ່ງຊັ້ນ ແມ່ນພວກເຮົາກໍຈັກເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ເທີ້ນ

ມະຫາບໍພິດ ເມື່ອພຣະອົງບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ແມ່ນພຣະບໍຣົມວົງສານຸວົງ ຜູ້ຕາມສະເດັດຈັກມີຄວາມຄິດແນວນີ້ວ່າ ພຣະຣາຊາເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ຖ້າຈັ່ງຊັ້ນ ແມ່ນພວກເຮົາກໍຈັກເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ເທີ້ນ

ມະຫາບໍພິດ ເມື່ອພຣະອົງບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ແມ່ນກອງທັບ ກໍຈັກມີຄວາມຄິດແນວນີ້ວ່າ ພຣະຣາຊາເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ຖ້າຈັ່ງຊັ້ນ ແມ່ນພວກເຮົາກໍຈັກເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ເທີ້ນ

ມະຫາບໍພິດ ເມື່ອພຣະອົງບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ແມ່ນຊາວນິຄົມ ຊາວຊົນນະບົດກໍຈັກມີຄວາມຄິດແນວນີ້ວ່າ ພຣະຣາຊາເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ຖ້າຈັ່ງຊັ້ນ ແມ່ນພວກເຮົາກໍຈັກເປັນຜູ້ບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ເທີ້ນ

ມະຫາບໍພິດ ເມື່ອພຣະອົງບໍ່ຜະໝາດ ອາໄສຄວາມບໍ່ຜະໝາດຢູ່ ແມ່ນພຣະອົງເອງກໍຈັກເປັນຜູ້ໄດ້ຮັບການຄຸ້ມຄອງ ຖືຮັກສາແລ້ວ ແມ່ນທ້ອງພຣະຄັງກໍຈັກເປັນອັນໄດ້ຮັບການ ຄຸ້ມຄອງຖືຮັກສາແລ້ວ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ເມື່ອປາຖະໜາໂພຄະຍິ່ງ ໆ ຂຶ້ນໄປ
ບັນດິດທັງຫຼາຍຍ່ອມສັນເສີນຄວາມບໍ່ຜະໝາດໃນການທຳບຸນ
ບັນດິດຜູ້ບໍ່ຜະໝາດຍ່ອມບັນລຸປະໂຫຍດທັງສອງ
ທີ່ຣະຊົນທ່ານຮຽກວ່າ ບັນດິດ
ຍ້ອນບັນລຸປະໂຫຍດທັງສອງ ຄື
ປະໂຫຍດໃນປັດຈຸບັນແລະປະໂຫຍດໃນພາຍໜ້າ

**ທຸຕິຍະອັບປະມາທະສູດທີ ໗ ຈົບ**

# ៧. ປະຖົມອະປຸດຕະກະສູດ

## ວ່າດ້ວຍຊັບທີ່ບໍ່ມີບຸດ ສູດທີ ໑

[໑໕໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແຕ່ຍັງເວັນ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພຣະເຈົ້າປະເສນທິໂກສົນດັ່ງນີ້ວ່າ ເຊີນເທີ້ນ ມະຫາບໍພິດ ພຣະອົງສະເດັດມາຈາກໄສແຕ່ຍັງເວັນ

ພຣະເຈົ້າປະເສນທິໂກສົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄະຫະບໍດີຜູ້ເປັນເສດຖີໃນນະຄອນສາວັດຖີນີ້ ເຖິງແກ່ກຳແລ້ວ ຂ້າພຣະອົງໃຫ້ຂົນຊັບສົມບັດທີ່ບໍ່ມີບຸດນັ້ນມາໄວ້ ໃນພະຣາດຊະວັງແລ້ວຈຶ່ງມາເຂົ້າເຝົ້າ ສະເພາະເງິນທໍ່ນັ້ນມີ ໘,໐໐໐,໐໐໐ ສ່ວນເຄື່ອງເງິນນັ້ນບໍ່ຕ້ອງເວົ້າເຖິງ ອັນໜຶ່ງ ຄະຫະບໍດີຜູ້ເປັນເສດຖີນັ້ນ ໄດ້ບໍຣິໂພກອາຫານແບບນີ້ ຄື ບໍຣິໂພກເຂົ້າປຸ້ນກັບນ້ຳສົ້ມຜັກ ໄດ້ໃຊ້ຜ້າເຄື່ອງນຸ່ງຫົ່ມແບບນີ້ ຄື ນຸ່ງຫົ່ມຜ້າເນື້ອຫຍາບທີ່ຕັດເປັນສາມປ່ຽງຫຍິບຕິດກັນ ໄດ້ໃຊ້ຍານພາຫະນະແບບນີ້ ຄື ໃຊ້ລົດເກົ່າ ໆ ກັ້ງຄັນຮົ່ມເຮັດດ້ວຍໃບໄມ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ເປັນແບບນັ້ນ ມະຫາບໍພິດ ຂໍ້ນີ້ ເປັນແບບນັ້ນ ອະສັດຕະບຸຣຸດໄດ້ໂພຄະຫຼວງຫຼາຍແລ້ວ ບໍ່ເຮັດຕົນໃຫ້ມີຄວາມສຸກສຸກສະບາຍ ບໍ່ເຮັດມານດາແລະບິດາໃຫ້ໄດ້ຮັບຄວາມສຸກສຸກສະບາຍ ບໍ່ເຮັດບຸດແລະພັນລະຍາໃຫ້ໄດ້ຮັບຄວາມສຸກສຸກສະບາຍ ບໍ່ເຮັດຂ້າທາດແລະກຳມະກອນໃຫ້ໄດ້ຮັບຄວາມສຸກສຸກສະບາຍ ບໍ່ເຮັດມິດແລະອຳມາດໃຫ້ໄດ້ຮັບຄວາມສຸກສຸກສະບາຍ ບໍ່ຕັ້ງທັກຂິນາອັນມີຜົນໃນເບື້ອງເທິງ ມີຜົນອັນດີ ມີວິບາກເປັນສຸກ ແລະ ເປັນໄປເພື່ອສະຫວັນໄວ້ໃນສະມະນະພາມທັງຫຼາຍ ໂພຄະເຫຼົ່ານັ້ນຂອງເຂົາທີ່ບໍ່ໄດ້ໃຊ້ສອຍໂດຍຖືກຕ້ອງແບບນີ້ ພຣະຣາຊາທັງຫຼາຍຢຶດໄປແດ່ ໂຈນທັງຫຼາຍປຸ້ນໄປແດ່ ໄຟໄໝ້ແດ່ ນ້ຳພັດໄປແດ່ ທາຍາດທັງຫຼາຍຜູ້ບໍ່ເປັນທີ່ຮັກນຳໄປແດ່ ເມື່ອເປັນແບບນີ້ ໂພຄະເຫຼົ່ານັ້ນຂອງເຂົາທີ່ບໍ່ໄດ້ໃຊ້ສອຍໂດຍຖືກຕ້ອງ ຍ່ອມເສຍໄປເປົ່າໂດຍບໍ່ມີການໃຊ້ສອຍ

ມະຫາບໍພິດ ໃນຖິ່ນອະມະນຸດ ມີສະໂບກຂະຣະນີເຊິ່ງມີນ້ຳໃສ ເຢັນ ຈະດສະນິດ ໃສສະອາດ ມີທ່ານ້ຳດີ ໜ້າອອນຊອນ ນ້ຳນັ້ນຄົນບໍ່ຕັກເອົາໄປ ບໍ່ດື່ມ ບໍ່ອາບ ບໍເຮັດຕາມທີ່ຕ້ອງການ ເມື່ອເປັນແບບນີ້ ນ້ຳທີ່ບໍ່ໄດ້ໃຊ້ສອຍໂດຍຖືກຕ້ອງນັ້ນ ເພິ່ງເສຍໄປເປົ່າໂດຍບໍ່ມີການໃຊ້ສອຍ ແມ່ນສັນໃດ ມະຫາບໍພິດ ອະສັດຕະບຸຣຸດໄດ້ໂພຄະຫຼວງຫຼາຍແລ້ວ ບໍ່ເຮັດຕົນໃຫ້ໄດ້ຮັບຄວາມສຸກ ສຸກສະບາຍ ຯລຯ ເມື່ອເປັນແບບນີ້ ໂພຄະເຫຼົ່ານັ້ນຂອງເຂົາທີ່ບໍ່ໄດ້ໃຊ້ສອຍໂດຍຖືກຕ້ອງ ຍ່ອມເສຍໄປເປົ່າໂດຍບໍ່ມີການໃຊ້ສອຍ ຄືກັນສັນນັ້ນ

ມະຫາບໍພິດ ສ່ວນສັດຕະບຸຣຸດໄດ້ໂພຄະຫຼວງຫຼາຍແລ້ວ ເຮັດຕົນໃຫ້ໄດ້ຮັບຄວາມສຸກສຸກສະບາຍ ເຮັດມານດາແລະບິດາໃຫ້ໄດ້ຮັບຄວາມສຸກສຸກສະບາຍ ເຮັດບຸດແລະພັນລະຍາໃຫ້ໄດ້ຮັບຄວາມສຸກສຸກສະບາຍ ເຮັດຂ້າທາດແລະກຳມະກອນໃຫ້ໄດ້ຮັບຄວາມສຸກສຸກສະບາຍ ເຮັດມິດແລະອຳມາດໃຫ້ໄດ້ຮັບຄວາມສຸກສຸກສະບາຍ ຕັ້ງທັກຂິນາອັນມີຜົນໃນເບື້ອງເທິງ ມີຜົນອັນດີ ມີວິບາກເປັນສຸກ ເປັນໄປເພື່ອສະຫວັນ ໄວ້ໃນສະມະນະພາມທັງຫຼາຍ ໂພຄະເຫຼົ່ານັ້ນຂອງເຂົາທີ່ໃຊ້ສອຍໂດຍຖືກຕ້ອງຢູ່ແນວນີ້ ພຣະຣາຊາທັງຫຼາຍກໍຍຶດໄປບໍ່ໄດ້ ໂຈນທັງຫຼາຍກໍປຸ້ນເອົາໄປບໍ່ໄດ້ ໄຟກໍໄໝ້ບໍ່ໄດ້ ນ້ຳກໍພັດໄປບໍ່ໄດ້ ທາຍາດທັງຫຼາຍຜູ້ບໍ່ເປັນທີ່ຮັກກໍນຳໄປບໍ່ໄດ້ ເມື່ອເປັນແນວນີ້ ໂພຄະເຫຼົ່ານັ້ນຂອງເຂົາທີ່ໃຊ້ສອຍຢູ່ໂດຍຖືກຕ້ອງ ຍ່ອມມີການໃຊ້ສອຍ ບໍ່ເສຍໄປເປົ່າ

ມະຫາບໍພິດ ໃນບ່ອນບໍ່ໄກຈາກໝູ່ບ້ານ ຫຼື ນິຄົມ ມີສະໂບກຂະຣະນີ ເຊິ່ງມີນ້ຳເຢັນດີ ໃສສະອາດ ມີທ່ານ້ຳດີ ໜ້າອອນຊອນ ນ້ຳນັ້ນ ຄົນຕັກໄປແດ່ ດື່ມແດ່ ອາບແດ່ ເຮັດຕາມທີ່ຕ້ອງການແດ່ ເມື່ອເປັນແນວນີ້ ນ້ຳທີ່ໃຊ້ສອຍຢູ່ໂດຍຖືກຕ້ອງນັ້ນ ຊື່ວ່າ ມີການໃຊ້ສອຍ ບໍ່ເສຍໄປລ້າ ແມ່ນສັນໃດ ມະຫາບໍພິດ ສັດຕະບຸຣຸດໄດ້ໂພຄະຫຼວງຫຼາຍແລ້ວ ເຮັດຕົນໃຫ້ໄດ້ຮັບຄວາມສຸກສຸກສະບາຍ ຯລຯ ເມື່ອເປັນແນວນີ້ ໂພຄະເຫຼົ່ານັ້ນຂອງເຂົາທີ່ໃຊ້ສອຍຢູ່ໂດຍຖືກຕ້ອງ ຍ່ອມມີການໃຊ້ສອຍ ບໍ່ເສຍໄປລ້າ ຄືກັນສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ນ້ຳເຢັນໃນຖິ່ນອະມະນຸດທີ່ບໍ່ໄດ້ໃຊ້ສອຍ
ຍ່ອມເຫືອດແຫ້ງໄປລ້າ ສັນໃດ
ຊັບທີ່ຄົນຊົ່ວໄດ້ແລ້ວ ຕົນເອງບໍ່ໄດ້ໃຊ້
ແລະບໍ່ໃຫ້ຄົນອື່ນໃຊ້ ກໍເສຍໄປລ້າ ໆ ສັນນັ້ນ

ສ່ວນວິນຍູຊົນຜູ້ມີປັນຍານັ້ນ ໄດ້ໂພຄະແລ້ວ
ຍ່ອມໃຊ້ສອຍແລະປະກອບກິດຈະການງານ
ເຂົາເປັນຄົນອາດຫານ ເບິ່ງແຍງໝູ່ຍາດ ບໍ່ຖືກຕິຕຽນ
ຍ່ອມເຂົ້າເຖິງແດນສະຫວັນ

**ປະຖົມອະປຸດຕະກະສູດທີ ໗ ຈົບ**

# ໑໐. ທຸຕິຍະອະປຸດຕະກະສູດ

## ວ່າດ້ວຍຊັບທີ່ບໍ່ມີບຸດ ສູດທີ ໘

[໑໕໑] ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ໄດ້ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແຕ່ຍັງເວັນ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພຣະເຈົ້າ ປະເສນທິໂກສົນດັ່ງນີ້ວ່າ ເຊີນເທີ້ນ ມະຫາບໍພິດ ພຣະອົງສະເດັດມາຈາກໃສແຕ່ຍັງເວັນແທ້ນໍ?

ພຣະເຈົ້າປະເສນທິໂກສົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄະຫະບໍດີຜູ້ເປັນເສດຖີໃນນະຄອນສາວັດຖີນີ້ ເຖິງແກ່ກຳແລ້ວ ຂ້າພຣະອົງໃຫ້ຂົນຊັບສົມບັດທີ່ບໍ່ມີບຸດນັ້ນມາໄວ້ໃນພະຣາດຊະວັງແລ້ວກໍມາເຂົ້າເຝົ້າ ສະເພາະເງິນທໍ່ນັ້ນມີ ໑໐,໐໐໐,໐໐໐ ສ່ວນເຄື່ອງເງິນນັ້ນ ບໍ່ຕ້ອງເວົ້າເຖິງ ອັນໜຶ່ງ ຄະຫະບໍດີຜູ້ເປັນເສດຖີນັ້ນ ໄດ້ບໍຣິໂພກອາຫານແນວນີ້ ຄື ບໍຣິໂພກເຂົ້າປຽນກັບນ້ຳສົ້ມຜັກ ໄດ້ໃຊ້ຜ້າເຄື່ອງນຸ່ງຫົ່ມແນວນີ້ ຄື ນຸ່ງຫົ່ມຜ້າເນື້ອຫຍາບທີ່ຕັດເປັນສາມປ່ຽງ ຫຍິບຕິດກັນ ໄດ້ໃຊ້ຍານພາຫະນະແນວນີ້ ຄື ໃຊ້ລົດເກົ່າ ໆ ກັ້ງຄັນຮົ່ມເຮັດດ້ວຍໃບໄມ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ເລື້ອງເຄີຍມີມາແລ້ວ ຄະຫະບໍດີຜູ້ເປັນເສດຖີນັ້ນ ໄດ້ສັ່ງໃຫ້ຈັດກຽມ ບິນທະບາດຖວາຍພຣະປັດເຈກສຳພຸດທະເຈົ້າພຣະນາມວ່າຕະຄະຣະສິຂີວ່າ ທ່ານທັງຫຼາຍ ຈົ່ງຖວາຍອາຫານບິນທະບາດແກ່ສະມະນະແລ້ວ ລຸກຈາກອາສະນະຍ່າງຈາກໄປ ພາຍຫຼັງໄດ້ມີຄວາມເສຍດາຍວ່າ ອາຫານບິນທະບາດນີ້ໃຫ້ຂ້າທາດ ຫຼື ກຳມະກອນບໍຣິໂພກຍັງດີກວ່າ ນອກຈາກນີ້ເຂົາຍັງຕັດຊີວິດບຸດນ້ອຍຄົນດຽວຂອງອ້າຍ ຍ້ອນຊັບສົມບັດເປັນເຫດອີກດ້ວຍ

ມະຫາບໍພິດ ດ້ວຍຜົນຂອງກຳທີ່ຄະຫະບໍດີຜູ້ເປັນເສດຖີນັ້ນ ສັ່ງໃຫ້ຈັດກຽມອາຫານ ບິນທະບາດຖວາຍພຣະປັດເຈກສຳພຸດທະເຈົ້າ ພຣະນາມວ່າ ຕະຄະຣະສິຂີ ເຂົາຈຶ່ງບັງເກີດໃນສຸຄະຕິໂລກສະຫວັນ ໗ ຄັ້ງ ດ້ວຍເສດຜົນຂອງກຳນັ້ນຄືກັນ ໄດ້ເປັນເສດຖີໃນນະຄອນສາວັດຖີນີ້ ເຖິງ ໗ ຄັ້ງ

ມະຫາບໍພິດ ດ້ວຍຜົນຂອງກຳທີ່ຄະຫະບໍດີຜູ້ເປັນເສດຖີນັ້ນ ຖວາຍອາຫານບິນທະບາດແລ້ວ ພາຍຫຼັງໄດ້ມີຄວາມເສຍດາຍວ່າ ອາຫານບິນທະບາດນີ້ ໃຫ້ຂ້າທາດ ຫຼື ກຳມະກອນບໍຣິໂພກຍັງດີກວ່າ ເຂົາຈຶ່ງບໍ່ຄິດຢາກບໍຣິໂພກອາຫານຈຳນວນຫລາຍທີ່ຕົນມີຢູ່ ບໍ່ຄິດຢາກໃຊ້ຜ້າເຄື່ອງນຸ່ງຫົ່ມຈຳນວນຫລາຍທີ່ຕົນມີຢູ່ ບໍ່ຄິດຢາກໃຊ້ຍານພາຫະນະສວຍງາມທີ່ຕົນມີຢູ່ ບໍ່ຄິດຢາກບໍຣິໂພກກາມຄຸນ ໕ ທີ່ດີ ໆ ທີ່ຕົນພໍຈະເສບໄດ້

ມະຫາບໍພິດ ອັນໜຶ່ງ ດ້ວຍຜົນຂອງກຳທີ່ຄະຫະບໍດີຜູ້ເສດຖີນັ້ນ ຕັດຊີວິດບຸດນ້ອຍ ຄົນດຽວຂອງອ້າຍ ຍ້ອນຊັບສົມບັດເປັນເຫດ ເຂົາຈຶ່ງຖືກໄຟເຜົາຢູ່ໃນນະຮົກຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີ ດ້ວຍເສດຜົນຂອງກຳນັ້ນຄືກັນ ຊັບສົມບັດທີ່ບໍ່ມີບຸດຮັບເອົາ ຈຶ່ງຖືກຂົນເຂົ້າຄັງຫຼວງນີ້ເປັນເທື່ອທີ ໗

ມະຫາບໍພິດ ກໍບຸນເກົ່າຂອງຄະຫະບໍດີ ຜູ້ເປັນເສດຖີນັ້ນໝົດໄປ ແລະ ບຸນໃໝ່ກໍບໍ່ໄດ້ສະສົມໄວ້ ໃນມື້ນີ້ ຄະຫະບໍດີຜູ້ເປັນເສດຖີນັ້ນ ຖືກໄຟເຜົາຢູ່ໃນມະຫາໂຣຣຸວະນະຮົກ

ພຣະເຈົ້າປະເສນທິໂກສົນທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄະຫະບໍດີຜູ້ເປັນເສດຖີບັງເກີດໃນມະຫາໂຣຣຸວະນະຮົກຢູ່ແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ແມ່ນແລ້ວ ມະຫາບໍພິດ ຄະຫະບໍດີຜູ້ເປັນເສດຖີບັງເກີດໃນມະຫາໂຣຣຸວະນະຮົກຢູ່

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ເຂົ້າເປືອກ ຊັບ ເງິນຄຳ
ສິ່ງຂອງທີ່ຫວງແຫນແນວໃດ? ແນວໜຶ່ງ
ຫຼື ຂ້າທາດ ກຳມະກອນ ຄົນຮັບໃຊ້
ແລະຜູ້ອາໄສທີ່ມີຢູ່ ທັງໝົດນັ້ນ ເອົາໄປນຳບໍ່ໄດ້
ຈະຕ້ອງລະຖິ້ມໄວ້ທັງໝົດ

ອັນໜຶ່ງ ບຸກຄົນເຮັດກຳໃດທາງກາຍ
ທາງວາຈາ ຫຼື ທາງໃຈ
ກຳນັ້ນເອງ ເປັນສົມບັດຂອງເຂົາ
ກຳນັ້ນເອງທີ່ເຂົາຈະນຳໄປໄດ້

ອັນໜຶ່ງ ກຳນັ້ນ ຍ່ອມຕິດຕາມເຂົາໄປ
ຄືເງົາຕິດຕາມໂຕໄປ ສັນນັ້ນ
ຍ້ອນແນວນັ້ນ ບຸກຄົນຄວນເຮັດກຳດີ
ສະສົມໄວ້ເປັນສົມບັດໃນໂລກໜ້າ
ຍ້ອນບຸນ ເປັນທີ່ເພິ່ງຂອງສັດທັງຫຼາຍໃນໂລກໜ້າ

**ທຸຕິຍະອະປຸດຕະກະສູດທີ ໑໐ ຈົບ**

**ວັກທີ ໘ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ຄື



# ໒. ຕະຕິຍະວັກ

## ໝວດທີ ໒

## ໑. ປຸກຄະລະສູດ

### ວ່າດ້ວຍບຸກຄົນ ໔ ປະເພດ

[໑໒໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ໄດ້ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພຣະເຈົ້າປະເສນທິໂກສົນ ຜູ້ປະທັບນັ່ງຢູ່ບ່ອນທີ່ສົມຄວນດັ່ງນີ້ວ່າ ມະຫາບໍພິດ ບຸກຄົນ ໔ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກໃດແດ່? ຄື

໑. ບຸກຄົນຜູ້ມືດມາແລະມືດໄປ
໒. ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ
໓. ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ
໔. ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ

ບຸກຄົນຜູ້ມືດມາແລະມືດໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນຕ່ຳ ຄື ຕະກູນຈັນທານ ຕະກູນຊ່າງສານ ຕະກູນນາຍພານ ຕະກູນຊ່າງລົດ ຫຼື ຕະກູນຄົນຖອກຂີ້ເຫຍື່ອ ເປັນຕະກູນຍາກຈົນ ມີເຂົ້າ ນ້ຳ

ແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນວັນນະທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມ ໄດ້ຍາກ ແລະ ມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕໍ່າຕ້ອຍ ມີຄວາມເຈັບປ່ວຍຫຼາຍ ເປັນຄົນຕາບອດ ເປັນງ່ອຍ ເປັນຄົນບໍ່ສົມປະກອບ ຫຼື ເປັນໂຣກອຳມະພາດ ມັກບໍ່ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ທີ່ພັກ ແລະ ເຄື່ອງໄຕ້ ແລະ ເຂົາຍັງປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ

ອຸປະມາ ຄື ບຸຣຸດໄປຈາກຄວາມມືດສູ່ຄວາມມືດມິດ ຫຼື ໄປຈາກຄວາມມືດມົວ ສູ່ຄວາມມືດມົວ ຫຼື ໄປຈາກສາຍເລືອດຊົ່ວສູ່ສາຍເລືອດຊົ່ວ ແມ່ນສັນໃດ ມະຫາບໍພິດ ຕະຖາຄົດ ກ່າວວ່າ ບຸກຄົນນີ້ມີອຸປະໄມສັນນັ້ນ ບຸກຄົນຜູ້ມືດມາແລະມືດໄປ ເປັນແນວນີ້ແລ

ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນຕໍ່າ ຄື ຕະກູນຈັນທານ ຕະກູນ ຊ່າງສານ ຕະກູນນາຍພານ ຕະກູນຊ່າງລົດ ຫຼື ຕະກູນຄົນຖອກຂີ້ເຫຍື່ອ ເປັນຕະກູນ ຍາກຈົນ ມີເຂົ້າ ນໍ້າ ແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນວັນນະທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມ ໄດ້ຍາກ ແລະ ມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕໍ່າຕ້ອຍ ມີຄວາມເຈັບປ່ວຍຫຼາຍ ເປັນຄົນຕາບອດ ເປັນງ່ອຍ ເປັນຄົນບໍ່ສົມປະກອບ ຫຼື ເປັນໂຣກອຳມະພາດ ມັກບໍ່ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ທີ່ພັກ ແລະ ເຄື່ອງໄຕ້ ແຕ່ເຂົາປະພຶດກາຍສຸດຈະຣິດ ວະຈີສຸຈະຣິດ ມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ອຸປະມາ ຄື ບຸຣຸດຂຶ້ນຈາກແຜ່ນດິນສູ່ບັນລັງ ຫຼື ຂຶ້ນຈາກບັນລັງສູ່ຫຼັງມ້າ ຫຼື ຂຶ້ນຈາກຫຼັງມ້າສູ່ຄໍຊ້າງ ຫຼື ຂຶ້ນຈາກຄໍຊ້າງສູ່ຜາສາດ ແມ່ນສັນໃດ ມະຫາບໍພິດ ຕະຖາຄົດ ກ່າວວ່າ ບຸກຄົນນີ້ມີອຸປະໄມສັນນັ້ນ ບຸກຄົນຜູ້ມືດມາແຕ່ສະຫວ່າງໄປ ເປັນແນວນີ້ແລ

ບຸກຄົນຜູ້ສະຫວ່າງມາແຕ່ມືດໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຕະກູນພາມມະນະມະຫາສານ ຫຼື ຕະກູນຄະຫະບໍດີມະຫາສານ ເປັນຕະກູນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄໍາແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດຫຼວງຫຼາຍ ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ທີ່ພັກ ແລະ ເຄື່ອງໄຕ້ ແຕ່ເຂົາປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ

ອຸປະມາ ຄື ບຸຣຸດລົງຈາກຜາສາດສູ່ຄໍຊ້າງ ຫຼື ລົງຈາກຄໍຊ້າງສູ່ຫຼັງມ້າ ຫຼື ລົງຈາກຫຼັງມ້າສູ່ບັນລັງ ຫຼື ລົງຈາກບັນລັງສູ່ພື້ນດິນ ຫຼື ລົງຈາກພື້ນດິນລົງສູ່ທີ່ມືດ ແມ່ນສັນໃດ ມະຫາບໍພິດ ຕະຖາຄົດກ່າວວ່າ ບຸກຄົນນີ້ມີອຸປະໄມສັນນັ້ນ ບຸກຄົນຜູ້ສະຫວ່າງມາ ແຕ່ມືດໄປ ເປັນແນວນີ້ແລ

ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຕະກູນພາມມະນະມະຫາສານ ຫຼື ຕະກູນຄະຫະບໍດີມະຫາສານ ເປັນຕະກູນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄໍາແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼວງຫຼາຍ ມີຊັບແລະທັນຍະຊາດຫຼວງຫຼາຍ ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ທີ່ພັກ ແລະ ເຄື່ອງໄຕ້ ແລະ ເຂົາກໍປະພຶດກາຍສຸດຈະຣິດ ວະຈີສຸຈະຣິດ ມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ

ອຸປະມາ ຄື ບຸຣຸດກ້າວໄປດ້ວຍດີຈາກບັນລັງສູ່ບັນລັງ ຫຼື ກ້າວໄປດ້ວຍດີຈາກຫຼັງ ມ້າສູ່ຫຼັງມ້າ ຫຼື ກ້າວໄປດ້ວຍດີຈາກຄໍຊ້າງສູ່ຄໍຊ້າງ ຫຼື ກ້າວໄປດ້ວຍດີຈາກຜາສາດສູ່ຜາສາດ ແມ່ນສັນໃດ ມະຫາບໍພິດ ຕະຖາຄົດກ່າວວ່າ ບຸກຄົນນີ້ມີອຸປະໄມສັນນັ້ນ ບຸກຄົນຜູ້ສະຫວ່າງມາແລະສະຫວ່າງໄປ ເປັນແນວນີ້ແລ

ມະຫາບໍພິດ ບຸກຄົນ ໔ ຈໍາພວກນີ້ແລ ມີຜາກົດຢູ່ໃນໂລກ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາ ປະພັນຕໍ່ໄປອີກ ວ່າ

ມະຫາບໍພິດ ບຸຣຸດເຂັນໃຈບໍ່ມີສັດທາ
ເປັນຄົນຂີ້ຖີ່ໜຽວແໜ້ນ ມີຄວາມດໍາຣິຊົ່ວ
ເປັນມິດສາທິດຖິ ບໍ່ມີຄວາມເອື້ອເຟື້ອ
ດ່າຕໍາໜິສະມະນະ ຫຼື ພາມ ຫຼື ວະນິພົກອື່ນ ໆ
ເຂົາເປັນຄົນບໍ່ມີປະໂຫຍດ ເປັນຄົນມັກໂກດ
ຍ່ອມຫ້າມຄົນທີ່ກໍາລັງຈະໃຫ້ສິ່ງຂອງເຄື່ອງໃຊ້ແກ່ຄົນທີ່ກໍາລັງຂໍ

ມະຫາບໍພິດຜູ້ເປັນໃຫຍ່ກວ່າປວງຊົນ
ຄົນເຊັ່ນນັ້ນ ເມື່ອຕາຍແລ້ວຍ່ອມເຂົ້າເຖິງນະຣົກອັນໂຫດຮ້າຍ
ບຸກຄົນປະເພດນີ້ ຊື່ວ່າ ຜູ້ມືດມາແລະມືດໄປ

ມະຫາບໍພິດ ບຸຣຸດເຂັນໃຈ ແຕ່ມີສັດທາ

ບໍ່ມີຄວາມຂີ້ຖີ່ ມີຄວາມດຳຣິປະເສີດ
ມີໃຈບໍ່ຟຸ້ງຊ່ານ ຍ່ອມໃຫ້ທານ
ຍ່ອມລຸກຮັບສະມະນະ ຫຼືພາມ ຫຼືວະນິພົກອື່ນ ໆ
ຍ່ອມຕັ້ງໃຈຮູ້ໃນຈັນຍາອັນຮຽບຮ້ອຍ
ບໍ່ຫ້າມຄົນທີ່ກຳລັງຈະໃຫ້ສິ່ງຂອງເຄື່ອງໃຊ້ແກ່ຄົນທີ່ກຳລັງຂໍ

ມະຫາບໍພິດຜູ້ເປັນໃຫຍ່ກວ່າປວງຊົນ
ຄົນເຊັ່ນນັ້ນເມື່ອຕາຍແລ້ວ ຍ່ອມເຂົ້າເຖິງໄຕຣທິບພະຍະສະຖານ
ບຸກຄົນປະເພດນີ້ ຊື່ວ່າຜູ້ມືດມາແຕ່ສະຫວ່າງໄປ

ມະຫາບໍພິດ ບຸຣຸດຮັ່ງມີ ແຕ່ບໍ່ມີສັດທາ
ເປັນຄົນຂີ້ຖີ່ໜຽວແໜ້ນ ມີຄວາມດຳຣິຊົ່ວ
ເປັນມິດສາທິດຖິ ບໍ່ມີຄວາມເອື້ອເຟື້ອ
ດ່າຕຳໜິສະມະນະ ຫຼື ພາມ ຫຼື ວະນິພົກອື່ນ ໆ
ເຂົາເປັນຄົນບໍ່ມີປະໂຫຍດ ເປັນຄົນມັກໂກດ
ຍ່ອມຫ້າມຄົນທີ່ກຳລັງຈະໃຫ້ສິ່ງຂອງເຄື່ອງໃຊ້ແກ່ຄົນທີ່ກຳລັງຂໍ

ມະຫາບໍພິດຜູ້ເປັນໃຫຍ່ກວ່າປວງຊົນ
ຄົນເຊັ່ນນັ້ນ ເມື່ອຕາຍແລ້ວຍ່ອມເຂົ້າເຖິງນະຮົກອັນໂຫດຮ້າຍ
ບຸກຄົນປະເພດນີ້ ຊື່ວ່າ ຜູ້ສະຫວ່າງມາແລະມືດໄປ

ມະຫາບໍພິດ ບຸຣຸດຮັ່ງມີ ທັງມີສັດທາ
ບໍ່ມີຄວາມຂີ້ຖີ່ ມີຄວາມດຳຣິປະເສີດ
ມີໃຈບໍ່ຟຸ້ງຊ່ານ ຍ່ອມໃຫ້ທານ
ຍ່ອມລຸກຮັບສະມະນະ ຫຼື ພາມ ຫຼື ວະນິພົກອື່ນ ໆ
ຍ່ອມຕັ້ງໃຈຮູ້ໃນຈັນຍາອັນຮຽບຮ້ອຍ
ບໍ່ຫ້າມຄົນທີ່ກຳລັງຈະໃຫ້ສິ່ງຂອງເຄື່ອງໃຊ້ແກ່ຄົນທີ່ກຳລັງຂໍ

ມະຫາບໍພິດຜູ້ເປັນໃຫຍ່ກວ່າປວງຊົນ
ຄົນເຊັ່ນນັ້ນເມື່ອຕາຍແລ້ວ ຍ່ອມເຂົ້າເຖິງໄຕຣທິບພະຍະສະຖານ
ບຸກຄົນປະເພດນີ້ ຊື່ວ່າ ຜູ້ສະຫວ່າງມາແລະສະຫວ່າງໄປ

**ປຸກຄະລະສູດທີ ໑ ຈົບ**

# ໘. ໄອຍິກາສູດ

## ວ່າດ້ວຍພຣະອັຍຍິກາຂອງພຣະເຈົ້າປະເສນທິໂກສົນ

[໑໓໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ໄດ້ສະເດັດເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແຕ່ຍັງເວັນ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບ ພຣະເຈົ້າປະເສນທິໂກສົນ ຜູ້ປະທັບນັ່ງຢູ່ບ່ອນທີ່ສົມຄວນດັ່ງນີ້ວ່າ ເຊີນເທີ້ນມະຫາບໍພິດພຣະອົງ ສະເດັດມາຈາກໄສແຕ່ຍັງເວັນແທ້ນໍ?

ພຣະເຈົ້າປະເສນທິໂກສົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອັຍຍິກາຂອງ ຂ້າພຣະອົງ ຊົງພຣະຊະຣາ ແກ່ເຖົ້າ ເປັນຜູ້ໃຫຍ່ ລ່ວງການຜ່ານໄວ ມີພະຊົນ ໑໒໐ ຊັນສາ ໄດ້ທິວົງຄົດສາແລ້ວ ພຣະອົງເປັນທີ່ຮັກ ເປັນທີ່ພໍໃຈຂອງຂ້າພຣະອົງຫຼາຍ ຂ້ານ້ອຍ

ຫາກຂ້າພຣະອົງ ໃຊ້ຊ້າງແກ້ວແລກແລ້ວຈະເພິ່ງໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດໄດ້ ຂ້າພຣະອົງກໍຈັກໃຫ້ແມ່ນເຊິ່ງຊ້າງແກ້ວເພື່ອໃຫ້ໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດເລີຍ

ຫາກຂ້າພຣະອົງໃຊ້ມ້າແກ້ວແລກໄດ້ແລ້ວ ຈັກໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດເລີຍ ຂ້າພຣະອົງກໍຈັກໃຫ້ແມ່ນເຊິ່ງມ້າແກ້ວເພື່ອໃຫ້ໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດເລີຍ

ຫາກຂ້າພຣະອົງໃຊ້ບ້ານສ່ວຍແລກໄດ້ແລ້ວ ຈັກໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດເລີຍ ຂ້າພຣະອົງກໍຈັກໃຫ້ແມ່ນເຊິ່ງບ້ານສ່ວຍ ເພື່ອໃຫ້ໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດເລີຍ

ຫາກຂ້າພຣະອົງໃຊ້ຊົນນະບົດແລກໄດ້ແລ້ວ ຈັກໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດເລີຍ ຂ້າພຣະອົງກໍເພິ່ງໃຫ້ແມ່ນເຊິ່ງຊົນນະບົດເພື່ອໃຫ້ໄດ້ສົມຫວັງວ່າ ຂໍພຣະອັຍຍິກາຂອງເຮົາຢ່າໄດ້ທິວົງຄົດເລີຍ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ໄວ້ດີຍິ່ງວ່າ ສັດທັງປວງມີຄວາມຕາຍເປັນທຳມະດາ ມີຄວາມຕາຍເປັນທີ່ສຸດ ບໍ່ລ່ວງພົ້ນຄວາມຕາຍໄປໄດ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ຂໍ້ນີ້ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ສັດທັງປວງມີຄວາມຕາຍເປັນທຳມະດາ ມີຄວາມຕາຍເປັນທີ່ສຸດ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ມະຫາບໍພິດ ພາຊະນະດິນຊະນິດໃດຊະນິດໜຶ່ງ ທັງດິບແລະສຸກ ພາຊະນະດິນເຫຼົ່ານັ້ນທັງໝົດ ມີຄວາມແຕກເປັນທຳມະດາ ມີຄວາມແຕກເປັນທີ່ສຸດ ບໍ່ພົ້ນຄວາມແຕກໄປໄດ້ ແມ່ນສັນໃດ ມະຫາບໍພິດ ສັດທັງປວງກໍມີຄວາມຕາຍເປັນທຳມະດາ ມີຄວາມຕາຍເປັນທີ່ສຸດ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ຄືກັນສັນນັ້ນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ໆລໆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ສັດທັງປວງຈັກຕາຍ ຍ້ອນຊີວິດມີຄວາມຕາຍເປັນທີ່ສຸດ
ສັດທັງຫຼາຍຈັກໄປຕາມກຳ ເຂົ້າເຖິງຜົນບຸນແລະບາບ
ຄື ຜູ້ເຮັດບາບຈັກໄປນະຣົກ ສ່ວນຜູ້ທຳບຸນຈັກໄປສະຫວັນ
ຍ້ອນແນວນັ້ນ ບຸກຄົນຄວນເຮັດແຕ່ກຳດີ
ສະສົມໄວ້ເປັນສົມບັດໃນໂລກໜ້າ
ຍ້ອນບຸນເປັນທີ່ເພິ່ງຂອງສັດທັງຫຼາຍໃນໂລກໜ້າ

**ໄອຍິກາສູດທີ ៨ ຈົບ**

## ៩. ໂລກະສູດ

### ວ່າດ້ວຍທຳທີ່ບໍ່ເກີດປະໂຫຍດແກ່ຊາວໂລກ

[໑៩៨] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳທໍ່ໃດນໍ? ເມື່ອເກີດຂຶ້ນແກ່ຊາວໂລກຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາບໍພິດ ທຳ ៣ ປະການ ເມື່ອເກີດຂຶ້ນແກ່ຊາວໂລກຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ທຳ ៣ ປະການ ອັນໃດແດ່ ຄື

໑. ໂລພະທຳ ເມື່ອເກີດຂຶ້ນແກ່ຊາວໂລກຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

໘. ໂທສະທຳ ເມື່ອເກີດຂຶ້ນແກ່ຊາວໂລກຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

໓. ໂມຫະທຳ ເມື່ອເກີດຂຶ້ນແກ່ຊາວໂລກຍ່ອມເກີດຂຶ້ນເພື່ອບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ມະຫາບໍພິດ ທຳ ໓ ປະການນີ້ແລ ເມື່ອເກີດຂຶ້ນແກ່ຊາວໂລກຍ່ອມເກີດຂຶ້ນເພື່ອບໍ່ ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ໂລພະ ໂທສະ ແລະ ໂມຫະເກີດຂຶ້ນພາຍໃນຕົນ
ຍ່ອມທຳຮ້າຍບຸຣຸດຜູ້ມີຈິດຊົ່ວຊາມ
ຄືຂີໄຜ່ກຳຈັດຕົ້ນໄຜ່ ສັນນັ້ນ

**ໂລກະສູດທີ ໓ ຈົບ**

# ໔. ອິດສັດຖະສູດ

## ວ່າດ້ວຍທານທີ່ປະກອບດ້ວຍອົງ ໕ ມີຜົນຫຼາຍ

[໑໓໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະເຈົ້າປະເສນທິໂກສົນປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນຄວນໃຫ້ທານໃນບ່ອນໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ຈິດເຫຼື້ອມໃສໃນບ່ອນໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ທານທີ່ໃຫ້ຢູ່ໄສຈຶ່ງມີຜົນຫຼາຍ

ມະຫາບໍພິດ ບຸກຄົນຄວນໃຫ້ທານໃນບ່ອນໃດ? ນັ້ນປະການໜຶ່ງ ແລະ ທານທີ່ໃຫ້ໃນບ່ອນໃດ? ຈຶ່ງມີຜົນຫຼາຍ ນັ້ນປະການໜຶ່ງ ທານທີ່ໃຫ້ແກ່ຜູ້ມີສິນມີຜົນຫຼາຍ ທານທີ່ໃຫ້ໃນຜູ້ທຸສິນບໍ່ມີຜົນຫຼາຍ ດ້ວຍເຫດນັ້ນ ອາຕະມາພາບຈັກຍ້ອນຖາມພຣະອົງໃນບັນຫາຂໍ້ນັ້ນແດ່ ພຣະອົງພໍພຣະທະໄທແນວໃດ? ເພິ່ງຊີ້ແຈ່ງແນວນັ້ນ ພຣະອົງຈະຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ? ໃນບ່ອນທີ່ມີການສູ້ຮົບເພິ່ງຜາກົດສະເພາະພຣະພັກຂອງພຣະອົງ ສົງຄາມກຳລັງຕິເຂົ້າມາປະຊິດກັນ ຖ້າກະສັດໜຸ່ມເປັນຜູ້ບໍ່ໄດ້ສຶກສາ ບໍ່ໄດ້ເຝິກຝົນ ບໍ່ມີຄວາມຊ່ຽວຊານ ບໍ່ໄດ້ເຄີຍປະລອງການຍິງ ເປັນຄົນຢ້ານ ຕື່ນຕົກໃຈ ມັກແລ່ນໜີ ມາອາສາ ພຣະອົງຈັກຊຸບລ້ຽງຄົນແບບນັ້ນໄວ້ບໍ່? ແລະ ພຣະອົງເພິ່ງຕ້ອງການຄົນເຊັ່ນນັ້ນຫຼືບໍ່?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກບໍ່ຊຸບລ້ຽງຄົນແບບນັ້ນ ແລະ ຂ້າພຣະອົງບໍ່ຕ້ອງການຄົນແນວນັ້ນເລີຍ

ຖ້າພານໝຸ່ມເປັນຜູ້ບໍ່ໄດ້ສຶກສາ ຯລຯ ມາອາສາ ຯລຯ ຖ້າແພດໝຸ່ມເປັນຜູ້ບໍ່ໄດ້ສຶກສາ ຯລຯ ມາອາສາ ຯລຯ ຖ້າສູດໝຸ່ມເປັນຜູ້ບໍ່ໄດ້ສຶກສາ ຯລຯ ມາອາສາ ພຣະອົງຈັກຊຸບລ້ຽງຄົນນັ້ນຫຼືບໍ່? ແລະ ພຣະອົງເພິ່ງຕ້ອງການຄົນເຊັ່ນນັ້ນຫຼືບໍ່?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ເພິ່ງຊຸບລ້ຽງຄົນແບບນັ້ນ ແລະ ຂ້າພຣະອົງບໍ່ຕ້ອງການຄົນເຊັ່ນນັ້ນເລີຍ

ມະຫາບໍພິດ ພຣະອົງຈະຊົງເຂົ້າພຣະຫະໄທຄວາມຂໍ້ນີ້ວ່າແນວໃດ? ໃນບ່ອນນີ້ການສູ້ຮົບຜາກິດສະເພາະພຣະພັກຂອງພຣະອົງ ສົງຄາມກຳລັງຕິປະຊິດກັນ ຖ້າກະສັດໝຸ່ມເປັນຜູ້ສຶກສາມາດີແລ້ວ ໄດ້ເຝິກຝົນແລ້ວ ມີຄວາມຊ່ຽວຊານ ໄດ້ເຝິກການຍິງມາແລ້ວ ບໍ່ເປັນຄົນຢ້ານ ບໍ່ຕື່ນຕົກໃຈ ບໍ່ຫຼົບໜີ ມາອາສາ ພຣະອົງຈັກຊຸບລ້ຽງຄົນນັ້ນຫຼືບໍ່? ແລະ ພຣະອົງເພິ່ງຕ້ອງການຄົນເຊັ່ນນັ້ນຫຼືບໍ່?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເພິ່ງຊຸບລ້ຽງຄົນນັ້ນ ແລະຂ້າພຣະອົງເພິ່ງຕ້ອງການຄົນເຊັ່ນນັ້ນ

ຖ້າພານໝຸ່ມເປັນຜູ້ສຶກສາດີແລ້ວ ຯລຯ ມາອາສາ ຯລຯ ຖ້າແພດໝຸ່ມ ເປັນຜູ້ສຶກສາດີແລ້ວ ຯລຯ ມາອາສາ ຯລຯ ຖ້າສູດໝຸ່ມເປັນຜູ້ສຶກສາດີແລ້ວ ຯລຯ ມາອາສາ ພຣະອົງເພິ່ງຊຸບລ້ຽງຄົນນັ້ນຫຼືບໍ່? ແລະ ພຣະອົງເພິ່ງຕ້ອງການຄົນເຊັ່ນນັ້ນຫຼືບໍ່?

ສັນນັ້ນ ມະຫາບໍພິດ ແມ່ນຫາກວ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ຈາກຕະກູນໃດ? ແລະ ກຸນລະບຸດນັ້ນ ເປັນຜູ້ລະອົງ ໕ ເປັນຜູ້ປະກອບດ້ວຍອົງ ໕ ທານທີ່ໃຫ້ແລ້ວໃນກຸນລະບຸດນັ້ນ ຈາກຕະກູນນັ້ນ ຍ່ອມມີຜົນຫຼາຍ

ອົງ ໕ ອັນໃດແດ່? ອັນກຸນລະບຸດນັ້ນລະໄດ້ ຄື

໑. ກາມສັນທະ (ຄວາມພໍໃຈໃນກາມ) ອັນກຸນລະບຸດນັ້ນລະໄດ້
໒. ພະຍາບາດ (ຄວາມຄິດປອງຮ້າຍ) ອັນກຸນລະບຸດນັ້ນລະໄດ້
໓. ຖີນະມິດທະ (ຄວາມທໍ້ດທູ່ແລະງ່ວມເຫງົາ) ອັນກຸນລະບຸດນັ້ນລະໄດ້
໔. ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານ) ອັນກຸນລະບຸດນັ້ນລະໄດ້
໕. ວິຈິກິດສາ (ຄວາມລັງເລສົງໄສ) ອັນກຸນລະບຸດນັ້ນລະໄດ້

ອົງ ໕ ນີ້ແລ ອັນກຸນລະບຸດນັ້ນລະໄດ້
ກຸນລະບຸດນັ້ນ ເປັນຜູ້ປະກອບດ້ວຍອົງ ໕ ອັນໃດແດ່
ຄື ກຸນລະບຸດນັ້ນ

໑. ເປັນຜູ້ປະກອບດ້ວຍ ສີນ ຂັນຂອງພຣະອະເສຂະ
໒. ເປັນຜູ້ປະກອບດ້ວຍ ສະມາທິ ຂັນຂອງພຣະອະເສຂະ
໓. ເປັນຜູ້ປະກອບດ້ວຍ ປັນຍາ ຂັນຂອງພຣະອະເສຂະ
໔. ເປັນຜູ້ປະກອບດ້ວຍ ວິມຸດຕິ ຂັນຂອງພຣະອະເສຂະ
໕. ເປັນຜູ້ປະກອບດ້ວຍ ວິມຸດຕິຍານທັດສະນະຂັນ ຂອງພຣະອະເສຂະ

ກຸນລະບຸດນັ້ນເປັນຜູ້ປະກອບດ້ວຍອົງ ໕ ນີ້ແລ ທານທີ່ໃຫ້ແລ້ວໃນກຸນລະບຸດຜູ້ລະອົງ ໕ ຜູ້ປະກອບດ້ວຍອົງ ໕ ຍ່ອມມີຜົນຫຼາຍ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ສິລະປະທະນູກຳລັງ ແລະ ຄວາມພຽນມີຢູ່ໃນຊາຍໃດ
ພຣະຣາຊາຜູ້ຊົງການສູ້ຮົບເພິ່ງຊຸບລ້ຽງຊາຍໜຸ່ມຜູ້ເຊັ່ນນັ້ນ
ບໍ່ເພິ່ງຊຸບລ້ຽງຊາຍໜຸ່ມຜູ້ບໍ່ກ້າຫານ
ຍ້ອນເຫດແຫ່ງຊາດ ສັນໃດ

ທຳຄືຂັນຕິແລະໂສຣັດຈະ ຕັ້ງຢູ່ໃນບຸກຄົນໃດ
ບຸກຄົນເພິ່ງບູຊາບຸກຄົນນັ້ນຜູ້ມີປັນຍາ
ມີຄວາມປະພຶດຢ່າງພຣະອະຣິຍະ
ແມ່ນມີຊາດຕະກູນຕ່ຳ ຄືກັນສັນນັ້ນ
ບຸກຄົນເພິ່ງສ້າງອາສົມອັນເປັນທີ່ອອນຊອນ
ອາຣາດທະນາພຣະພະຫູສູດທັງຫຼາຍໃຫ້ຢູ່ທີ່ນັ້ນ

ເພິ່ງຂຸດນ້ຳສ້າງໄວ້ໃນປ່າທີ່ກັນດານນ້ຳ
ແລະສ້າງຂົວໃນບ່ອນເປັນຫຼົ່ມ
ເພິ່ງຖວາຍເຂົ້າ ນ້ຳ ຂອງຫຍ້ຳ ຜ້າແລະເສນາສະນະ
ໃນທ່ານຜູ້ຊື່ກົງທັງຫຼາຍ ດ້ວຍໃຈອັນເຫຼື້ອມໃສ

ກ້ອນເພື້ອມີສາຍຟ້າແມບເຫຼື້ອມເມືອບມາບ
ມີຍອດຕັ້ງຮ້ອຍ ຮ້ອງຫື່ມ ໆ ຢູ່ ຕົກຣົດແຜ່ນດິນ
ເຮັດບ່ອນໂນນແລະບ່ອນຫຼຸບໃຫ້ເຕັມ ແມ່ນສັນໃດ

ທາຍົກຜູ້ມີສັດທາ ເປັນບັນດິດໄດ້ຟັງແລ້ວ
ຕົກແຕ່ງໂພຊະນາຫານ ລ້ຽງວະນິພົກດ້ວຍເຂົ້ານ້ຳໃຫ້ອິ່ມໜຳ
ທ່ຽວໄປໃນໂຮງທານ ສັ່ງວ່າ ທ່ານທັງຫຼາຍຈົ່ງໃຫ້ ທ່ານທັງຫຼາຍຈົ່ງໃຫ້
ແລະທາຍົກນັ້ນ ບັນລືສຽງຄືກ້ອນເພື່ອຮ້ອງທີ່ມ ໆ
ເມື່ອຝົນກຳລັງຕົກ ສາຍນ້ຳແຫ່ງບຸນອັນເຕັມປ່ຽມນັ້ນ
ຍ່ອມຫຼັ່ງທົດທາຍົກຜູ້ໃຫ້ ສັນນັ້ນ

**ອິດສັດຖະສູດທີ ໔ ຈົບ**

# ໕. ປັບພະໂຕປະມະສູດ

## ວ່າດ້ວຍຊະຣາແລະມໍລະນະເປັນຄືກັນກັບພູ

[໑໓໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນໄດ້ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແຕ່ຍັງເວັນ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພຣະເຈົ້າ ປະເສນທິໂກສົນຜູ້ປະທັບນັ່ງຢູ່ບ່ອນທີ່ສົມຄວນດັ່ງນີ້ວ່າ ເຊີນເທີ້ນມະຫາບໍພິດພຣະອົງສະເດັດ ມາຈາກໃສແຕ່ຍັງເວັນແທ້ນໍ?

ພຣະເຈົ້າປະເສນທິໂກສົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກະສັດຕາທິຣາດຜູ້ໄດ້ມຸດທາພິເສກແລ້ວ ມົວເມົາຍ້ອນຄວາມເປັນໃຫຍ່ ຖືກຄວາມກຳໜັດໃນການຕຸ້ມສຸມແລ້ວ ຜູ້ເຖິງເຊິ່ງຄວາມໝັ້ນຄົງໃນຊົນນະບົດ ຊະນະປະຖະພີມົນທົນໃຫຍ່ແລ້ວຄອບຄອງຢູ່ ມີຣາດຊະກິດອັນໃດ ບັດນີ້ ຂ້າພຣະອົງກໍຂົນຂວາຍໃນຣາດຊະກິດອັນນັ້ນ

ມະຫາບໍພິດ ພຣະອົງຈະຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ? ໃນບ່ອນນີ້ ຣາດຊະບຸຣຸດ ຂອງພຣະອົງຜູ້ຄວນເຊື່ອຖື ມີວາຈາເປັນຫຼັກຖານ ມາຈາກທິດຕາເວັນອອກ ເຂົ້າມາເຝົ້າ ພຣະອົງແລ້ວຂາບທູນແນວນີ້ວ່າ ຂໍເດຊະພຣະອົງ ຂ້າພຣະອົງ ມາຈາກທິດຕາເວັນອອກໃນບ່ອນນັ້ນ ໄດ້ເຫັນພູໃຫຍ່ສູງທຽມກ້ອນເພື່ອກຳລັງກິ້ງບົດສັດທັງປວງ ຂ້ານ້ອຍ ຂໍພຣະອົງຊົງກະທຳສິ່ງທີ່ເພິ່ງກະທຳເທີ້ນ

ລຳດັບນັ້ນ ບຸຣຸດຄົນທີ ໔ ຜູ້ຄວນເຊື່ອຖື ເປັນຄົນເວົ້າມີຫຼັກຖານ ມາຈາກທິດ ຕາເວັນຕົກ ຯລຯ

ຕໍ່ຈາກນັ້ນ ບຸຣຸດຄົນທີ ໓ ຜູ້ຄວນເຊື່ອຖື ເປັນຄົນເວົ້າມີຫຼັກຖານ ມາຈາກທິດເໜືອ ຯລຯ

ຕໍ່ຈາກນັ້ນ ບຸຣຸດຄົນທີ່ ໔ ຜູ້ຄວນເຊື່ອຖື ເປັນຄົນເວົ້າມີຫຼັກຖານ ມາຈາກທິດໃຕ້ ເຂົ້າມາເຝົ້າພຣະອົງແລ້ວຂາບທູນແນວນີ້ວ່າ ຂໍເດຊະພຣະອົງ ຂ້າພຣະອົງ ມາຈາກທິດໃຕ້ໃນບ່ອນນັ້ນ ໄດ້ເຫັນພູໃຫຍ່ສູງຫຼາຍກ້ອນເພື່ອກໍາລັງກິ້ງບົດສັດທັງປວງ ໂດຍຂ້ານ້ອຍ ຂໍພຣະອົງຊົງເຮັດສິ່ງທີ່ເພິ່ງເຮັດເທີ້ນ ເມື່ອມະຫາໄພຮ້າຍແຮງທີ່ຈະເຮັດໃຫ້ມະນຸດສິ້ນຊີວິດ ອັນໃຫຍ່ຫຼວງປານນີ້ ບັງເກີດຂຶ້ນແລ້ວແກ່ພຣະອົງ ອັນໃດນໍ? ຈະເປັນກິດທີ່ພຣະອົງຄວນເຮັດໃນຖານະເປັນມະນຸດທີ່ຫາໄດ້ຍາກ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອມະຫາໄພຮ້າຍກາດ ທີ່ຈະເຮັດໃຫ້ມະນຸດສິ້ນຊີວິດ ອັນໃຫຍ່ຫຼວງປານນີ້ ບັງເກີດຂຶ້ນແກ່ຂ້າພຣະອົງ ອັນໃດນໍ? ຈະເປັນກິດທີ່ຂ້າພຣະອົງຄວນກະທໍາໃນຖານະເປັນມະນຸດທີ່ຫາໄດ້ຍາກ ນອກຈາກປະຕິບັດທໍາໃຫ້ສະເໝີຕົ້ນສະເໝີປາຍ ສ້າງບຸນກຸສົນເອົາໄວ້

ມະຫາບໍພິດ ອາຕະມາພາບຂໍຖວາຍພຣະພອນໃຫ້ຊົງຮູ້ ຊະຣາແລະມໍລະນະຍ່ອມຄອບງໍາພຣະອົງ ເມື່ອຊະຣາແລະມໍລະນະຄອບງໍາພຣະອົງຢູ່ ອັນໃດນໍ? ຈະເປັນກິດທີ່ພຣະອົງຄວນທໍາ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຊະຣາແລະມໍລະນະຄອບງໍາຂ້າພຣະອົງຢູ່ ອັນໃດນໍ? ຈະເປັນກິດທີ່ຂ້າພຣະອົງຄວນກະທໍາ ນອກຈາກປະຕິບັດທໍາໃຫ້ສະເໝີຕົ້ນສະເໝີປາຍ ສ້າງບຸນກຸສົນເອົາໄວ້ ຂ້າແດ່ ພຣະອົງຜູ້ຈະເລີນ ກະສັດຕາທິຣາດຜູ້ໄດ້ມຸດທາພິເສກແລ້ວ ມົວເມົາຍ້ອນຄວາມເປັນໃຫຍ່ ຖືກຄວາມກໍາໜັດໃນການຕຸ້ມສຸມແລ້ວ ຜູ້ເຖິງຄວາມໝັ້ນຄົງໃນຊົນນະບົດ ຜູ້ຊະນະປະຖະພີມົນທົນໃຫຍ່ແລ້ວຄອບຄອງຢູ່ ຊົງເຮັດການຮົບດ້ວຍພົນຊ້າງເຫຼົ່າໃດ ເມື່ອຊະຣາແລະມໍລະນະຄອບງໍາຢູ່ ກໍບໍ່ແມ່ນຄະຕິ ບໍ່ແມ່ນວິໄສທີ່ຈະເຮັດການຮົບດ້ວຍພົນຊ້າງແມ່ນເຫຼົ່ານັ້ນ

ກະສັດຕາທິຣາດຜູ້ໄດ້ມຸດທາພິເສກແລ້ວ ຯລຯ ຜູ້ຊະນະປະຖະພີມົນທົນໃຫຍ່ແລ້ວຄອບຄອງຢູ່ ຊົງເຮັດການຮົບດ້ວຍພົນມ້າເຫຼົ່າໃດ ຯລຯ ຮົບດ້ວຍພົນລົດເຫຼົ່າໃດ ຯລຯ ຮົບດ້ວຍພົນຍ່າງແມ່ນເຫຼົ່າໃດ ເມື່ອຊະຣາແລະມໍລະນະຄອບງໍາຢູ່ ກໍບໍ່ແມ່ນຄະຕິ ບໍ່ແມ່ນວິໄສທີ່ຈະເຮັດການຮົບດ້ວຍພົນຍ່າງແມ່ນເຫຼົ່ານັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ໃນຣາດຊະຕະກູນນີ້ ມະຫາອໍາມາດຜູ້ມີມົນ ເຊິ່ງສາມາດຈະໃຊ້ມົນທໍາລາຍຂ້າເສິກທີ່ຍົກທັບມາ ກໍມີຢູ່ຄືກັນ ແຕ່ເມື່ອຊະຣາແລະມໍລະນະຄອບງໍາຢູ່ ກໍບໍ່ແມ່ນຄະຕິ ບໍ່ແມ່ນວິໄສທີ່ຈະເຮັດການຮົບດ້ວຍມົນແມ່ນເຫຼົ່ານັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ໃນຣາດຊະຕະກູນນີ້ ເງິນຄໍາທັງທີ່ຢູ່ໃນພື້ນດິນ ທັງທີ່ຢູ່ໃນອາກາດ ເຊິ່ງພວກຂ້າພຣະອົງສາມາດຈະໃຊ້ເປັນເຄື່ອງມືຍຸແຍ່ໃຫ້ຂ້າເສິກທີ່ຍົກທັບມາແຕກກັນ ກໍມີຢູ່ເປັນຈໍານວນຫຼາຍ ແຕ່ເມື່ອຊະຣາແລະມໍລະນະຄອບງໍາກໍບໍ່ແມ່ນຄະຕິ ບໍ່ແມ່ນວິໄສທີ່ຈະເຮັດການຮົບດ້ວຍຊັບແມ່ນເຫຼົ່ານັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ກໍແລ ເມື່ອຊະຣາແລະມໍລະນະຄອບງໍາຢູ່ ອັນໃດນໍ? ຈະເປັນກິດທີ່ຂ້າພຣະອົງຄວນກະທໍາ ນອກຈາກປະຕິບັດທໍາໃຫ້ສະເໝີຕົ້ນສະເໝີປາຍ ສ້າງບຸນກຸສົນເອົາໄວ້

ມະຫາບໍພິດ ຂໍ້ນີ້ ເປັນແນວນັ້ນ ມະຫາບໍພິດ ຂໍ້ນີ້ເປັນແນວນັ້ນ ກໍເມື່ອຊະຣາແລະມໍ

ລະນະຄອບງຳຢູ່ ອັນໃດນໍ? ຈະເປັນກິດທີ່ພຣະອົງຄວນກະທຳນອກຈາກປະຕິບັດທຳໃຫ້ສະເໝີຕົ້ນສະເໝີປາຍ ສ້າງບຸນກຸສົນເອົາໄວ້

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ພູໃຫຍ່ລ້ອມແລ້ວດ້ວຍສິລາ ສູງຮອດທ້ອງຟ້າ
ກິ້ງບົດສັດມາໂດຍຮອບທັງ ໔ ທິດ ແມ່ນສັນໃດ
ຊະຣາແລະມໍລະນະກໍສັນນັ້ນ
ຍ່ອມຄອບງຳສັດທັງຫຼາຍ ຄື ພວກກະສັດ

ພາມ ແພດ ສູດ ຄົນຈັນທານ ແລະ ຄົນຖອກຂີ້ເຫຍື່ອ
ບໍ່ເວັ້ນຜູ້ໃດໄວ້ເລີຍ ຍ່ອມຍ່ຳຍີເຫຼົ່າສັດທັງໝົດ
ຢູ່ບ່ອນນັ້ນ ບໍ່ມີຍຸດທະພູມສຳລັບພົນຊ້າງ
(ພົນມ້າ) ພົນລົດ ພົນຍ່າງ
ແລະບໍ່ອາດຈະເອົາຊະນະແມ່ນດ້ວຍມົນຫຼືດ້ວຍຊັບ

ຍ້ອນແນວນັ້ນ ບຸກຄົນຜູ້ເປັນບັນດິດ ມີປັນຍາ
ເມື່ອເຫັນປະໂຫຍດຕົນ ເພິ່ງຕັ້ງສັດທາໄວ້ໃນພຣະພຸດທະເຈົ້າ
ພຣະທຳ ແລະ ພຣະສົງ
ຜູ້ໃດມີປົກກະຕິປະພຶດທຳທາງກາຍ ທາງວາຈາ ທາງໃຈ
ບັນດິດທັງຫຼາຍ ຍ່ອມສັນເສີນຜູ້ນັ້ນໃນໂລກນີ້ໂດຍແທ້
ຜູ້ນັ້ນລະໂລກນີ້ໄປແລ້ວ ຍ່ອມບັນເທີງໃນສະຫວັນ

**ປັບພະໂຕປະມະສູດທີ ໕ ຈົບ**

**ວັກທີ ໑ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ປຸກຄະລະສູດ
໒. ໂລກະສູດ
໓. ໄອຍິກາສູດ
໔. ອິດສັດຖະສູດ
໕. ປັບພະໂຕປະມະສູດ

ພຣະສູດວ່າດ້ວຍກຸສົນ ໕ ສູດນີ້ ພຣະພຸດທະເຈົ້າຜູ້ປະເສີດຊົງສະແດງໄວ້ແລ້ວ

**ໂກສະລະສັງຍຸດ ຈົບບໍລິບູນ**

# ໔. ມາຣະສັງຍຸດ

## ໑. ປະຖົມວັກ

### ໝວດທີ ໑

## ໑. ຕະໂປກຳມະສູດ

### ວ່າດ້ວຍການພ່ຳເພັງຕະບະ

[໑໓໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າເມື່ອທຳອິດຕັດສະຣູ້ ປະທັບຢູ່ທີ່ຕົ້ນອະຊະປາລະນິໂຄດ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຮ່ຳເພິງແນວນີ້ວ່າ ເຮົາເປັນຜູ້ພົ້ນແລ້ວນໍ ຈາກທຸກກະຣະກີຣິຍານັ້ນ ເຮົາເປັນຜູ້ພົ້ນດີແລ້ວນໍ ຈາກທຸກກະຣະກີຣິຍາອັນບໍ່ປະກອບດ້ວຍປະໂຫຍດນັ້ນ ເຮົາເປັນຜູ້ບັນລຸໂພທິຍານແລ້ວ

ຄັ້ງນັ້ນ ມານຜູ້ມີບາບໄດ້ຮູ້ຄວາມຮ່ຳເພິງຂອງພຣະຜູ້ມີພຣະພາກເຈົ້າດ້ວຍໃຈ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ມານົບທັງຫຼາຍບໍລິສຸດໄດ້
ດ້ວຍການພ່ຳເພັງຕະບະໃດ
ທ່ານຫຼີກຈາກການພ່ຳເພັງຕະບະນັ້ນແລ້ວ
ເປັນຜູ້ບໍ່ບໍລິສຸດ ສຳຄັນວ່າເປັນຜູ້ບໍລິສຸດ
ທ່ານພາດຈາກທາງແຫ່ງຄວາມບໍລິສຸດແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ເຮົາຮູ້ແລ້ວວ່າຕະບະອື່ນ ໆ ແນວໃດແນວໜຶ່ງ
ບໍ່ປະກອບດ້ວຍປະໂຫຍດ
ຕະບະທັງປວງບໍ່ອຳນວຍປະໂຫຍດໃຫ້
ຄືໄມ້ພາຍຫຼືໄມ້ຖໍ່ ບໍ່ອຳນວຍປະໂຫຍດເທິງບົກ ສັນນັ້ນ
ຈຶ່ງຈະເລີນມັກ ຄື ສີນ ສະມາທິ ແລະປັນຍາ ເພື່ອຕັດສະຣູ້

ເປັນຜູ້ບັນລຸຄວາມບໍລິສຸດຢ່າງປະເສີດແລ້ວ
ມານຜູ້ເຮັດເຊິ່ງທີ່ສຸດ ເຮົາໄດ້ກໍາຈັດທ່ານສາແລ້ວ

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ຕະໂປກໍາມະສູດທີ ໑ ຈົບ**

# ໘. ນາຄະສູດ

## ວ່າດ້ວຍມານແປງກາຍເປັນພະຍາຊ້າງ

[໑໓໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທໍາອິດຕັດສະຮູ້ ປະທັບຢູ່ທີ່ຕົ້ນອະຊະປາລະນິໂຄດໃກ້ຝັ່ງແມ່ນໍ້າເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ກາງແຈ້ງໃນຄືນອັນມືດ ແລະ ຝົນກໍາລັງຕົກຢູ່

ຄັ້ງນັ້ນ ມານຜູ້ມີບາບຕ້ອງການຈະໃຫ້ຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກເກີດຂຶ້ນແກ່ພຣະຜູ້ມີພຣະພາກເຈົ້າ ຈຶ່ງແປງກາຍເປັນພະຍາຊ້າງໃຫຍ່ ເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພະຍາຊ້າງນັ້ນ ມີຫົວຄືກ້ອນຫີນໃຫຍ່ສີດໍາປອດ ມີງາທັງສອງສີຄືເງິນຍວງ ມີງວງຄືງອນໄຖໃຫຍ່

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ທ່ານແປງກາຍທັງທີ່ງາມແລະບໍ່ງາມ
ທ່ອງທ່ຽວຢູ່ຕະຫຼອດການອັນຍາວນານ
ມານຜູ້ມີບາບເອີຍ ເຊົາໄດ້ແລ້ວສໍາລັບການແປງກາຍຂອງທ່ານ
ມານຜູ້ເຮັດເຊິ່ງທີ່ສຸດ ເຮົາໄດ້ກໍາຈັດທ່ານສາແລ້ວ

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ນາຄະສູດທີ ໘ ຈົບ**

## ៧. ສຸພະສູດ

### ວ່າດ້ວຍຮ່າງກາຍທີ່ງາມ

[໑໓໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທໍາອິດຕັດສະຣູ້ປະທັບຢູ່ທີ່ຕົ້ນອະຊະປາລະນິໂຄດໃກ້ຝັ່ງ ແມ່ນໍ້າເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ກາງແຈ້ງໃນຄືນອັນມືດ ແລະ ຝົນກໍາລັງຕົກຫຍອຍຢູ່

ຄັ້ງນັ້ນ ມານຜູ້ມີບາບຕ້ອງການຈະໃຫ້ຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນທົວລຸກເກີດຂຶ້ນແກ່ພຣະຜູ້ມີພຣະພາກເຈົ້າ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວສະແດງເພດຕ່າງ ໆ ຫຼາຍ ໆ ຢ່າງ ທັງທີ່ງາມແລະບໍ່ງາມ ໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ທ່ານແປງກາຍທັງທີ່ງາມແລະບໍ່ງາມ
ທ່ອງທ່ຽວຢູ່ຕະຫຼອດການອັນຍາວນານ
ມານຜູ້ມີບາບເອີຍ ເຮົາໄດ້ແລ້ວສໍາລັບການແປງກາຍຂອງທ່ານ
ມານຜູ້ກະທໍາເຊິ່ງທີ່ສຸດ ເຮົາໄດ້ກໍາຈັດທ່ານສາແລ້ວ
ຊົນເຫຼົ່າໃດສັງລວມກາຍ ວາຈາ ໃຈດີແລ້ວ
ຊົນເຫຼົ່ານັ້ນ ຍ່ອມບໍ່ຕົກຢູ່ໃນອໍານາດຂອງມານ
ຊົນເຫຼົ່ານັ້ນ ຍ່ອມບໍ່ຍ່າງຕາມຫຼັງມານ
ຄັ້ງນັ້ນ ມານຜູ້ມີບາບ ຯລຯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ສຸພະສູດທີ ៧ ຈົບ**

## ໘. ປະຖົມມາຣະປາສະສູດ

### ວ່າດ້ວຍບ້ວງແຫ່ງມານ ສູດທີ ໑

[໑໔໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນ ພາຣານະສີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ

ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ວິມຸດຕິ (ຄວາມລຸດພົ້ນ) ອັນປະເສີດເຮົາບັນລຸແລ້ວ ວິມຸດຕິອັນປະເສີດເຮົາເຮັດໃຫ້ແຈ້ງແລ້ວ ຍ້ອນມະນະສິການໂດຍແຍບຄາຍ ຍ້ອນຕັ້ງຄວາມພຽນໄວ້ ຊອບໂດຍແຍບຄາຍ ແມ່ນທ່ານທັງຫຼາຍກໍຈົ່ງບັນລຸວິມຸດຕິອັນປະເສີດ ຈົ່ງເຮັດວິມຸດຕິອັນປະເສີດໃຫ້ແຈ້ງຍ້ອນມະນະສິການໂດຍແຍບຄາຍ ຍ້ອນຕັ້ງຄວາມພຽນໄວ້ຖືກຕ້ອງໂດຍແຍບຄາຍເທີ້ນ

ຄັ້ງນັ້ນ ມານຜູ້ມີບາບໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ທ່ານໄດ້ຖືກບ້ວງແຫ່ງມານ ທັງທີ່ເປັນຂອງທິບ
ທັງທີ່ເປັນຂອງມະນຸດ ຄ້ອງໄວ້ແລ້ວ
ທ່ານໄດ້ຖືກເຄື່ອງມັດຂອງມານມັດໄວ້ແລ້ວ
ສະມະນະ ທ່ານບໍ່ພົ້ນຈາກເຮົາໄປໄດ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ເຮົາໄດ້ພົ້ນແລ້ວຈາກບ້ວງແຫ່ງມານ
ທັງທີ່ເປັນຂອງທິບ ທັງທີ່ເປັນຂອງມະນຸດ
ເຮົາໄດ້ພົ້ນແລ້ວຈາກເຄື່ອງມັດຂອງມານ
ມານຜູ້ກະທຳເຊິ່ງທີ່ສຸດ ເຮົາໄດ້ກຳຈັດທ່ານສາແລ້ວ
ຄັ້ງນັ້ນ ມານຜູ້ມີບາບ ฯລฯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ປະຖົມມາຣະປາສະສູດທີ ໔ ຈົບ**

# ໕. ທຸຕິຍະມາຣະປາສະສູດ

## ວ່າດ້ວຍບ້ວງແຫ່ງມານ ສູດທີ ໔

[໑໔໑] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ

ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເຮົາພົ້ນແລ້ວຈາກບ້ວງທັງປວງ ທັງທີ່ເປັນຂອງທິບ ທັງທີ່ເປັນຂອງມະນຸດ ແມ່ນພວກທ່ານກໍພົ້ນແລ້ວຈາກບ້ວງທັງປວງ ທັງທີ່ເປັນຂອງທິບ ທັງທີ່ເປັນຂອງມະນຸດ ພວກທ່ານຈົ່ງຈາຣິກໄປ ເພື່ອປະໂຫຍດສຸກແກ່ຊົນຈຳນວນຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເກື້ອກູນ ແລະ ຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ ພວກທ່ານຢ່າໄດ້ໄປທາງດຽວກັນສອງອົງ ຈົ່ງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຈົ່ງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ສັດທັງຫຼາຍ ຜູ້ມີກິເລດຄືທຸລີໃນຕາໜ້ອຍມີຢູ່ ຍ່ອມເສື່ອມຍ້ອນບໍ່ໄດ້ຟັງທຳ ຈັກມີຜູ້ຮູ້ທຳ ພິກຂຸທັງຫຼາຍ ແມ່ນເຮົາກໍຈັກໄປສູ່ເຂດອຸຣຸເວລາເສນານິຄົມເພື່ອສະແດງທຳ

ຄັ້ງນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກດ້ວຍຄາຖາ ວ່າ

ທ່ານໄດ້ຖືກບ້ວງທັງປວງ ທັງທີ່ເປັນຂອງທິບ
ທັງທີ່ເປັນຂອງມະນຸດ ຄ້ອງໄວ້ແລ້ວ
ທ່ານໄດ້ຖືກເຄື່ອງພັນທະນາການຫຼວງຫຼາຍມັດໄວ້ແລ້ວ
ສະມະນະ ທ່ານບໍ່ພົ້ນຈາກເຮົາໄປໄດ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ເຮົາໄດ້ພົ້ນແລ້ວຈາກບ້ວງທັງປວງ
ທັງທີ່ເປັນຂອງທິບ ທັງທີ່ເປັນຂອງມະນຸດ
ເຮົາໄດ້ພົ້ນແລ້ວຈາກເຄື່ອງພັນທະນາການຫຼວງຫຼາຍ
ມານຜູ້ກະທຳເຊິ່ງທີ່ສຸດ ເຮົາໄດ້ກຳຈັດທ່ານສາແລ້ວ[1]
ຄັ້ງນັ້ນ ມານຜູ້ມີບາບ ຯລຯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ທຸຕິຍະມາຣະປາສະສູດທີ ໕ ຈົບ**

# ໖. ສັບປະສູດ

## ວ່າດ້ວຍມານແປງກາຍເປັນພະຍາງູ

[໑໔໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງໃນບ່ອນກາງແຈ້ງ ໃນຄືນອັນມືດ ແລະ ຝົນກຳລັງຕົກຫຍອຍຢູ່

ຄັ້ງນັ້ນ ມານຜູ້ມີບາບຕ້ອງການຈະໃຫ້ຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກເກີດຂຶ້ນແກ່ພຣະຜູ້ມີພຣະພາກເຈົ້າ ຈຶ່ງແປງກາຍເປັນພະຍາງູໃຫຍ່ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພະຍາງູນັ້ນ ມີກາຍຄືເຮືອລຳໃຫຍ່ທີ່ເຮັດດ້ວຍໄມ້ທ່ອນໃຫຍ່ໝົດຕົ້ນ ມີພັງພານ ຄື ສາດຜືນໃຫຍ່ສຳລັບປູຕາກແປ້ງຂອງຊ່າງເຮັດສຸຣາ ມີໜ່ວຍຕາຄືຖາດສຳຣິດໃບໃຫຍ່ຂອງພຣະເຈົ້າໂກສົນ ມີລີ້ນແລບອອກຈາກປາກຄືສາຍຟ້າແມບໃນຂະນະທີ່ກ້ອນເຟື້ອກຳລັງຮ້ອງຫົ່ມ ໆ ມີສຽງຫັນໃຈເຂົ້າຫັນໃຈອອກຄືສຽງສູບຂອງຊ່າງຄຳທີ່ກຳລັງເປົ່າລົມຢູ່ ສັນນັ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ມຸນີໃດອາໄສເຮືອນວ່າງຢູ່
ມຸນີນັ້ນສັງລວມຕົນໄດ້ແລ້ວ
ເຂົາສະລະຄວາມອາໄລໃນອັດຕະພາບນັ້ນທ່ຽວໄປ
ຍ້ອນການສະລະຄວາມອາໄລໃນອັດຕະພາບແລ້ວທ່ຽວໄປນັ້ນ
ເໝາະສົມແກ່ຜູ້ເຊັ່ນນັ້ນ
ສັດທີ່ສັນຈອນໄປມາກໍຫຼາຍ ສິ່ງທີ່ເປັນຕາຢ້ານກໍຫຼາຍ

ອັນໜຶ່ງ ເຮືອດແລະສັດເລືອຄານກໍດາດດື່ນ
ແຕ່ມະຫາມຸນີຜູ້ຢູ່ໃນເຮືອນວ່າງ
ບໍ່ຫວັ່ນໄຫວຍ້ອນສິ່ງທີ່ເປັນຕາຢ້ານເຫຼົ່ານັ້ນແມ່ນພຽງຂົນລຸກ
ເຖິງແມ່ນທ້ອງຟ້າຈະແຕກ ແຜ່ນດິນຈະໄຫວ
ສັດທັງຫຼາຍຈະສະດຸ້ງຢ້ານກັນກໍຕາມ
ເຖິງແມ່ນຫອກຈະປັກຢູ່ເອິກກໍຕາມ
ພຣະພຸດທະເຈົ້າທັງຫຼາຍກໍບໍ່ຊົງປ້ອງກັນໂຕ

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ສັບປະສູດທີ ໖ ຈົບ**

# ໗. ສຸປະຕິສູດ

## ວ່າດ້ວຍການບັນທົມ

[໑໕໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈົງກົມຢູ່ກາງແຈ້ງເກືອບຕະຫຼອດຄືນໃນເວລາໃກ້ຮຸ່ງແຫ່ງຣາຕີ ຊົງລ້າງພຣະບາດແລ້ວສະເດັດເຂົ້າພຣະວິຫານ ຊົງສຳເລັດສີຫະໄສຍາດໂດຍສະແຄງຂວາ ຊົງຊ້ອນພຣະບາດເຫຼື່ອມພຣະບາດ ມີພຣະສະຕິສຳປະຊັນຍະ ຊົງທຳຄວາມໝາຍຮູ້ທີ່ຈະສະເດັດລຸກຂຶ້ນໄວ້ໃນພຣະຫະໄທ

ຄັ້ງນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ທ່ານຫຼັບຢູ່ບໍ? ເປັນຫຍັງ? ທ່ານຍັງຫຼັບຢູ່ນໍ?
ທ່ານຫຼັບຄືຕາຍແລ້ວບໍ?
ທ່ານຫຼັບໂດຍຄິດວ່າ ເຮົາໄດ້ເຮືອນວ່າງແນວນັ້ນແມ່ນບໍ?
ເມື່ອດວງອາທິດຂຶ້ນສູງແລ້ວ ເປັນຫຍັງ ທ່ານຍັງຫຼັບຢູ່ນໍ?

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ຜູ້ບໍ່ມີຕັນຫາຄືຕາໜ່າງເຊິ່ງແຜ່ໄປໃນອາລົມຕ່າງ ໆ
ທີ່ຈະນຳໄປສູ່ພົບໃດ ໆ ເຖິງຫຼັບຢູ່ກໍຊື່ວ່າຕື່ນ
ຍ້ອນອຸປະທິທັງປວງ°ສິ້ນໄປ
ວຽກອັນໃດຂອງທ່ານໃນເລື້ອງນີ້ນໍ ມານ
ຄັ້ງນັ້ນ ມານຜູ້ມີບາບ ຯລຯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ສຸປະຕິສູດທີ ໗ ຈົບ**

# ໗. ນັນທະນະສູດ

## ວ່າດ້ວຍຄວາມຍິນດີ

[໑໘໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງ ທີ່ປະທັບແລ້ວໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຄົນມີບຸດຍ່ອມຍິນດີຍ້ອນບຸດ
ຄົນມີງົວຍ່ອມຍິນດີຍ້ອນງົວຄືກັນ
ຍ້ອນອຸປະທິເຮັດໃຫ້ນໍຣະຊົນຍິນດີ
ສັນນັ້ນ ຄົນທີ່ຂາດອຸປະທິຈຶ່ງບໍ່ຍິນດີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາ ວ່າ

ຄົນມີບຸດຍ່ອມເສົ້າໂສກຍ້ອນບຸດ
ຄົນມີງົວຍ່ອມເສົ້າໂສກຍ້ອນງົວຄືກັນ
ຍ້ອນອຸປະທິເຮັດໃຫ້ນໍຣະຊົນເສົ້າໂສກ
ດັ່ງນັ້ນ ຄົນທີ່ບໍ່ມີອຸປະທິຈຶ່ງບໍ່ເສົ້າໂສກ[໑]

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົຕຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ນັນທະນະສູດທີ ໗ ຈົບ**

# ໘. ປະຖົມອາຍຸສູດ

## ວ່າດ້ວຍອາຍຸ ສູດທີ ໑

[໑໘໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄືໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ

ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ອາຍຸຂອງມະນຸດທັງຫຼາຍນີ້ໜ້ອຍແທ້ ຈະຕ້ອງໄປສູ່ສຳປະຣາຍະພົບ ຄວນທຳກຸສົນ ຄວນປະພຶດພົມມະຈັນ ສັດຜູ້ເກີດມາແລ້ວຈະບໍ່ຕາຍບໍ່ມີ ພິກຂຸທັງຫຼາຍ ຄົນທີ່ມີຊີວິດຢູ່ໄດ້ດົນກໍຢູ່ໄດ້ພຽງແຕ່ ໑໐໐ ປີ ຫຼື ຈະຢູ່ເກີນໄປແດ່ກໍ ມີໜ້ອຍ

ຄັ້ງນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

        ມະນຸດທັງຫຼາຍມີອາຍຸຍືນຍາວ
    ຄົນດີບໍ່ຄວນດູໝິ່ນອາຍຸນັ້ນເລີຍ
    ຄວນເຮັດໂຕຄືເດັກອ່ອນທີ່ຖ້າແຕ່ຈະດື່ມນົມ ສັນນັ້ນ
    ຄວາມຕາຍຍັງມາບໍ່ເຖິງດອກ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາວ່າ

        ມະນຸດທັງຫຼາຍມີອາຍຸໜ້ອຍ
    ຄົນດີຄວນດູໝິ່ນອາຍຸນັ້ນ
    ຄວນເຮັດໂຕຄືຄົນທີ່ຖືກໄຟໄໝ້ຫົວ ສັນນັ້ນ
    ຄວາມຕາຍທີ່ຈະມາບໍ່ເຖິງບໍ່ມີ

ຄັ້ງນັ້ນ ມານຜູ້ມີບາບ ຯລຯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ປະຖົມອາຍຸສູດທີ ໗ ຈົບ**

# ໑໐. ທຸຕິຍະອາຍຸສູດ

## ວ່າດ້ວຍອາຍຸ ສູດທີ ໘

[໑໔໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ຯລຯ ເຂດນະຄອນຣາດຊະຄືໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ ໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ອາຍຸຂອງມະນຸດທັງຫຼາຍນີ້ໜ້ອຍແທ້ ຈະຕ້ອງໄປສູ່ສຳປະຣາຍະພົບ

ຄວນທຳກຸສົນ ຄວນປະພຶດພົມມະຈັນ ສັດຜູ້ເກີດມາແລ້ວຈະບໍ່ຕາຍບໍ່ມີ ພິກຂຸທັງຫຼາຍ ຄົນທີ່ມີຊີວິດຢູ່ໄດ້ດົນກໍຢູ່ໄດ້ພຽງ ໑໐໐ ປີ ຫຼືຈະຢູ່ເກີນໄປແດ່ກໍ ມີໜ້ອຍ

ຄັ້ງນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ວັນຄືນບໍ່ລ່ວງຜ່ານໄປ ຊີວິດບໍ່ດັບໄປ
ອາຍຸໝຸນຕາມສັດທັງຫຼາຍ
ຄືຄິ້ງລໍ້ໝຸນຕາມທູບລົດ ສັນນັ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາວ່າ

ວັນຄືນລ່ວງຜ່ານໄປ ຊີວິດດັບໄປ
ອາຍຸຂອງສັດທັງຫຼາຍໝົດໄປ
ຄືນໍ້າໃນແມ່ນໍ້ານ້ອຍໝົດໄປ ສັນນັ້ນ[១]

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ທຸຕິຍະອາຍຸສູດທີ ໑໐ ຈົບ**

**ວັກທີ ໑ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

# ໘. ທຸຕິຍະວັກ

## ໝວດທີ ໘

## ໑. ປາສານະສູດ

### ວ່າດ້ວຍມານກິ້ງຫີນ

[໑໘໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ກາງແຈ້ງໃນຄືນອັນມືດ ແລະຝົນກຳລັງຕົກຫຍອຍຢູ່ ຄັ້ງນັ້ນ ມານຜູ້ມີບາບຕ້ອງການຈະໃຫ້ຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກເກີດຂຶ້ນແກ່ພຣະຜູ້ມີພຣະພາກເຈົ້າ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນ ຢູ່ແລ້ວກິ້ງຫີນຂະໜາດໃຫຍ່ລົງໄປໃສ່ບ່ອນໃກ້ພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານຜູ້ມີບາບດ້ວຍພຣະຄາຖາ ວ່າ

ເຖິງແມ່ນວ່າ ທ່ານຈະກິ້ງພູຄິດຊະກູດມາໝົດໜ່ວຍ
ພຣະພຸດທະເຈົ້າທັງຫຼາຍ ຜູ້ລຸດພົ້ນແລ້ວໂດຍຖືກຕ້ອງ
ກໍບໍ່ມີຄວາມຫວັ່ນໄຫວ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ປາສານະສູດທີ ໑ ຈົບ**

## ໘. ສີຫະສູດ

### ວ່າດ້ວຍຣາດຊະສີ

[໑໘໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີບໍລິສັດໝູ່ໃຫຍ່ຮ້ອມລ້ອມ ຊົງສະແດງທຳຢູ່

ຄັ້ງນັ້ນ ມານຜູ້ມີບາບໄດ້ມີຄວາມຄິດດັ່ງນີ້ວ່າ ພຣະສະມະນະໂຄດົມນີ້ ມີບໍລິສັດໝູ່ໃຫຍ່ຮ້ອມລ້ອມ ສະແດງທຳຢູ່ ທາງທີ່ດີເຮົາເພິ່ງເຂົ້າໄປຫາພຣະສະມະນະໂຄດົມຮອດບ່ອນຢູ່ເພື່ອໃຫ້ບໍລິສັດຫຼົງເຂົ້າໃຈຜິດເທີ້ນ

ລຳດັບນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ເປັນຫຍັງ? ທ່ານຈຶ່ງກ້າບັນລືຄືຣາດຊະສີ
ໃນທ່າມກາງບໍລິສັດ
ຄົນທີ່ພໍຈະຕໍ່ສູ້ກັບທ່ານໄດ້ກໍຍັງມີ
ທ່ານເຂົ້າໃຈວ່າ ເປັນຜູ້ຊະນະແລ້ວແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າຕັດພຣະຄາຖາ ວ່າ

ພຣະຕະຖາຄົດທັງຫຼາຍ
ຜູ້ເປັນມະຫາວີຣະ ບັນລຸທະສະພົນຍານ[๑]
ຂ້າມຕັນຫາອັນເປັນເຫດໃຫ້ຫ່ງວໄປໃນໂລກໄດ້ແລ້ວ
ຈຶ່ງກ້າບັນລືໃນທ່າມກາງບໍລິສັດ

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ສີຫະສູດທີ ໘ ຈົບ**

## ໙. ສະກະລິກະສູດ

### ວ່າດ້ວຍຫີນແຕກ

[໑໘໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ມັດທະກຸດສີ ສະຖານທີ່ພຣະຣາດຊະທານອະໄພແກ່ໝູ່ເນື້ອ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ຫີນແຕກກະທົບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງມີທຸກຂະເວທະນາທາງພຣະວໍຣະກາຍທີ່ຮຸນແຮງ ຮ້ອນຮົນ ອັນບໍ່ສະບາຍພຣະຫະໄທ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າມີພຣະສະຕິສຳປະຊັນຍະ ຊົງອົດກັ້ນທຸກຂະເວທະນານັ້ນໄວ້ໄດ້ ບໍ່ຊົງເດືອດຮ້ອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປູຜ້າສັງຄາຕິ ໔ ຊັ້ນ ຊົງສຳເລັດສີຫະໄສຍາດ ໂດຍສະແຄງຂວາ ຊົງຊ້ອນພຣະບາດເຫຼື່ອມພຣະບາດ ມີພຣະສະຕິສຳປະຊັນຍະ

ຄັ້ງນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ທູນຖາມພຣະ

ຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ທ່ານນອນດ້ວຍຄວາມຊຶມເຊົາ
ຫຼືເອົາແຕ່ມົວເມົາຄິດກາບກອນອັນໃດຢູ່
ປະໂຫຍດຂອງທ່ານມີບໍ່ຫຼາຍ
ທ່ານຢູ່ບ່ອນນອນບ່ອນນັ່ງອັນສະຫງັດແຕ່ຜູ້ດຽວ
ຕັ້ງໃຈແຕ່ຈະຫຼັບ ເປັນຫຍັງ? ທ່ານຍັງຫຼັບຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບ ວ່າ

ເຮົາບໍ່ໄດ້ນອນດ້ວຍຄວາມຊຶມເຊົາ
ແລະບໍ່ໄດ້ເອົາແຕ່ມົວເມົາຄິດກາບກອນອັນໃດຢູ່ດອກ
ເຮົາບັນລຸປະໂຫຍດຕົນແລ້ວ ປາສະຈາກຄວາມໂສກເສົ້າ
ຢູ່ບ່ອນນອນບ່ອນນັ່ງອັນສະຫງັດແຕ່ຜູ້ດຽວ
ນອນຄຳນຶງເຖິງສັດທັງປວງດ້ວຍຄວາມອີດູ

ລູກສອນສຽບເອິກຂອງຊົນເຫຼົ່າໃດ
ມັດໃຈໃຫ້ລຸ້ມຫຼົງຢູ່ ແມ່ນຊົນເຫຼົ່ານັ້ນໃນໂລກນີ້
ທັງ ໆ ທີ່ມີລູກສອນສຽບເອິກຢູ່ ກໍຍັງຫຼັບຢູ່ໄດ້

ເປັນຫຍັງ? ເຮົາຜູ້ປາສະຈາກລູກສອນແລ້ວ ຈະຫຼັບບໍ່ໄດ້ບໍ?
ເຮົາຍ່າງໄປ ໆ ກໍບໍ່ຫວາດຫວັ່ນ ເຖິງຫຼັບຢູ່ກໍບໍ່ໄດ້ຢ້ານເກງ
ກາງຄືນແລະກາງເວັນບໍ່ເຮັດໃຫ້ເຮົາເດືອດຮ້ອນ
ເຮົາບໍ່ພົບເຫັນຄວາມເສື່ອມອັນໃດ ໆ ໃນໂລກ
ສະນັ້ນ ເຮົາຈຶ່ງນອນຄຳນຶງເຖິງສັດທັງປວງດ້ວຍຄວາມອີດູ

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ສະກະລິກະສູດທີ ໓ ຈົບ**

# ໔. ປະຕິຣູປະສູດ

## ວ່າດ້ວຍສິ່ງທີ່ສົມຄວນ

[໑໕໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໝູ່ບ້ານພາມຊື່ເອກສາລາ ແຄວ້ນໂກສົນ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີຄະຫຼືຫັດບໍລິສັດໝູ່ໃຫຍ່ຮ້ອມລ້ອມ ຊົງສະແດງທຳຢູ່

ຄັ້ງນັ້ນ ມານຜູ້ມີບາບໄດ້ມີຄວາມຄິດດັ່ງນີ້ວ່າ ພຣະສະມະນະໂຄດົມນີ້ມີຄະຫຼືຫັດບໍລິສັດໝູ່ໃຫຍ່ຮ້ອມລ້ອມ ສະແດງທຳຢູ່ ທາງທີ່ດີເຮົາເພິ່ງເຂົ້າໄປຫາພຣະສະມະນະໂຄດົມຮອດບ່ອນຢູ່ ເພື່ອໃຫ້ບໍລິສັດຫຼົງເຂົ້າໃຈຜິດເທີ້ນ

ລຳດັບນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ທ່ານພ່ຳສອນທຳໃດແກ່ຜູ້ອື່ນ
ທຳນັ້ນບໍ່ສົມຄວນແກ່ທ່ານເລີຍ
ເມື່ອທ່ານກ່າວສອນທຳນັ້ນ
ຢ່າໄດ້ຂ້ອງໃນຄວາມຍິນດີຍິນຮ້າຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພຣະສຳພຸດທະເຈົ້າຊົງມີຈິດເກື້ອກູນອະນຸເຄາະ
ຊົງພ່ຳສອນທຳໃດແກ່ຜູ້ອື່ນ
ຕະຖາຄົດລຸດພົ້ນຈາກຄວາມຍິນດີຍິນຮ້າຍໃນທຳນັ້ນແລ້ວ

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ປະຕິຣູປະສູດທີ ໔ ຈົບ**

# ໕. ມານະສະສູດ

## ວ່າດ້ວຍບ້ວງໃຈ

[໑໕໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ບ້ວງນີ້ທ່ຽວໄປໃນອາກາດ
ມີໃນໃຈ ສັນຈອນໄປຢູ່
ເຮົາຈັກຄ້ອງທ່ານດ້ວຍບ້ວງນັ້ນ
ສະມະນະ ທ່ານບໍ່ພົ້ນຈາກເຮົາໄປໄດ້ດອກ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ເຮົາປາສະຈາກຄວາມພໍໃຈໃນອາລົມເຫຼົ່ານີ້
ຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ເຊິ່ງເປັນທີ່ອອນຊອນໃຈ
ມານຜູ້ເຮັດເຊິ່ງທີ່ສຸດ ເຮົາໄດ້ກຳຈັດທ່ານສາແລ້ວ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດ ຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ມານະສະສູດທີ ໕ ຈົບ**

# ໖. ປັດຕະສູດ

## ວ່າດ້ວຍເລື້ອງບາດ

[໑໕໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ທີ່ກ່ຽວກັບອຸປາທານຂັນ ໕ ພິກຂຸເຫຼົ່ານັ້ນ ຕ່າງໃສ່ໃຈໃຫ້ສຳເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງ່ຽງໂສດສະດັບທຳຢູ່

ຄັ້ງນັ້ນ ມານຜູ້ມີບາບໄດ້ມີຄວາມຄິດດັ່ງນີ້ວ່າ ພຣະສະມະນະໂຄດົມນີ້ຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາທີ່ກ່ຽວກັບອຸປາທານຂັນ ໕ ພິກຂຸເຫຼົ່ານັ້ນ ຕ່າງໃສ່ໃຈໃຫ້ສຳເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງ່ຽງໂສດສະດັບທຳຢູ່ ທາງທີ່ດີເຮົາເພິ່ງເຂົ້າໄປຫາພຣະສະມະນະໂຄດົມຮອດບ່ອນຢູ່ ເພື່ອໃຫ້ບໍລິສັດຫຼົງເຂົ້າໃຈຜິດເທີ້ນ

ສະໄໝນັ້ນ ພິກຂຸເຫຼົ່ານັ້ນ ໄດ້ວາງບາດສ່ອນໃຫຍ່ໄວ້ກາງແຈ້ງ ລຳດັບນັ້ນ ມານຜູ້ມີບາບແປງກາຍເປັນງົວພະລິພັດຍ່າງໄປສູ່ທີ່ວາງບາດ ພິກຂຸອົງໜຶ່ງ ຈຶ່ງບອກກັບພິກຂຸອີກອົງໜຶ່ງວ່າພິກຂຸ ພິກຂຸ ງົວພະລິພັດນັ້ນ ກຳລັງຈະເຮັດບາດແຕກ ເມື່ອພິກຂຸນັ້ນເວົ້າແນວນັ້ນແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ນັ້ນບໍ່ແມ່ນງົວພະລິພັດ ນັ້ນຄືມານຜູ້ມີບາບ ມາເພື່ອລວງໃຫ້ທ່ານຫຼົງເຂົ້າໃຈຜິດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານຜູ້ມີບາບດ້ວຍພຣະຄາຖາ ວ່າ

ອະຣິຍະສາວົກຍ່ອມເບື່ອໜ່າຍຮູບ
ເວທະນາ ສັນຍາ ສັງຂານ ແລະ ວິນຍານ
ແນວນີ້ວ່າ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນຂອງເຮົາ
ແມ່ນມານແລະເສນາມານສະແຫວງຫາຢູ່ທຸກຫົນທຸກແຫ່ງ
ກໍບໍ່ພໍ້ອະຣິຍະສາວົກຜູ້ເບື່ອໜ່າຍແລ້ວແນວນີ້
ຜູ້ມີອັດຕະພາບອັນກະເສມ ແລະ ລ່ວງພົ້ນສັງໂຍດທັງປວງ

ລຳດັບນັ້ນ ມານຜູ້ມີບາບ ຯລຯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ປັດຕະສູດທີ ໗ ຈົບ**

# ໘. ອາຍະຕະນະສູດ

## ວ່າດ້ວຍອາຍະຕະນະ ໖

[໑໕໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນເຂດນະຄອນເວສາລີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ທີ່ກ່ຽວກັບຜັດສາຍະຕະນະ ໖ ພິກຂຸເຫຼົ່ານັ້ນ ຕ່າງໃສ່ໃຈໃຫ້ສຳເລັດປະໂຫຍດນ້ອມນຶກມາດ້ວຍຄວາມເຕັມໃຈ ງ່ຽງໂສດສະດັບທຳຢູ່

ຄັ້ງນັ້ນ ມານຜູ້ມີບາບໄດ້ມີຄວາມຄິດດັ່ງນີ້ວ່າ ພຣະສະມະນະໂຄດົມນີ້ແລ ຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທໍາມີກະຖາທີ່ກ່ຽວກັບຜັດສາຍະຕະນະ ໖ ພິກຂຸເຫຼົ່ານັ້ນ ຕ່າງໃສ່ໃຈໃຫ້ສໍາເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງ່ຽງໂສດສະດັບທໍາຢູ່ ທາງທີ່ດີເຮົາເພິ່ງເຂົ້າໄປຫາພຣະສະມະນະໂຄດົມຮອດບ່ອນຢູ່ ເພື່ອໃຫ້ບໍລິສັດຫຼົງເຂົ້າໃຈຜິດເທີ້ນ

ລໍາດັບນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ຮ້ອງສຽງດັງ ເປັນຕາຢ້ານ ຄືແຜ່ນດິນຈະຍຸບຫຼົ່ມລົງຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ ລໍາດັບນັ້ນ ພິກຂຸອົງໜຶ່ງຈຶ່ງກ່າວກັບພິກຂຸອີກອົງໜຶ່ງແນວນີ້ວ່າ ພິກຂຸ ພິກຂຸ ແຜ່ນດິນນີ້ຈະຫຼົ່ມຍຸບລົງແລ້ວຕິບໍ ເມື່ອພິກຂຸນັ້ນ ກ່າວແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບພິກຂຸນັ້ນວ່າ ພິກຂຸ ແຜ່ນດິນນີ້ບໍ່ຍຸບຫຼົ່ມລົງດອກ ພິກຂຸທັງຫຼາຍ ນັ້ນຄືມານຜູ້ມີບາບ ມາເພື່ອລວງໃຫ້ ພວກທ່ານຫຼົງເຂົ້າໃຈຜິດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງຕັດກັບມານ ຜູ້ມີບາບດ້ວຍພຣະຄາຖາວ່າ

ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ
ແລະທໍາມາຣົມທັງໝົດນີ້ ເປັນໂລກາມິດອັນແຮງກ້າ
ຊາວໂລກພາກັນໜົກມຸ້ນຢູ່ໃນອາລົມເຫຼົ່ານີ້
ສ່ວນສາວົກຂອງພຣະພຸດທະເຈົ້າ ມີສະຕິ
ຂ້າມພົ້ນໂລກາມິດນັ້ນ ທັງຂ້າມພົ້ນບ້ວງແຫ່ງມານໄດ້ແລ້ວ
ຮຸ່ງເຮືອງຢູ່ຄືດວງອາທິດ ສັນນັ້ນ

ລໍາດັບນັ້ນ ມານຜູ້ມີບາບ ຯລຯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ອາຍະຕະນະສູດທີ ໗ ຈົບ**

# ໘. ປິນດະສູດ

## ວ່າດ້ວຍເລື້ອງບິນທະບາດ

[໑໕໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໝູ່ບ້ານພາມຊື່ປັນຈະ ສາລາ ແຄວ້ນມະຄົດ ສະໄໝນັ້ນ ທີ່ໝູ່ບ້ານພາມຊື່ປັນຈະສາລາ ມີງານນັກຂັດຕະເລີກ ແຈກຂອງແກ່ພວກເດັກນ້ອຍ ເມື່ອຮຸ່ງເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດຢູ່ໃນໝູ່ບ້ານພາມຊື່ປັນຈະສາລາ ສະໄໝນັ້ນ ພາມມະນະຄະຫະບໍດີຊາວປັນ

ຈະສາລາຖືກມານຜູ້ມີບາບດົນໃຈ ດ້ວຍປະສົງວ່າ ພຣະສະມະນະໂຄດົມຢ່າໄດ້ອາຫານບິນທະບາດເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ໝູ່ບ້ານພາມຊື່ປັນຈະສາລາ ເພື່ອບິນທະບາດດ້ວຍບາດເປົ່າແນວໃດ? ກໍສະເດັດກັບມາດ້ວຍບາດເປົ່າແນວນັ້ນ ລຳດັບນັ້ນ ມານຜູ້ມີບາບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ສະມະນະ ທ່ານໄດ້ອາຫານບິນທະບາດແດ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມານຜູ້ມີບາບ ທ່ານເອງເປັນຜູ້ເຮັດໃຫ້ເຮົາບໍ່ໄດ້ອາຫານບິນທະບາດ ບໍ່ແມ່ນບໍ?

ມານຜູ້ມີບາບຂາບທູນວ່າ ຖ້າເປັນແນວນັ້ນ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງສະເດັດເຂົ້າໄປສູ່ໝູ່ບ້ານພາມຊື່ ປັນຈະສາລາ ເພື່ອບິນທະບາດໃໝ່ອີກ ຂ້າພຣະອົງຈັກເຮັດໃຫ້ພຣະຜູ້ມີພຣະພາກເຈົ້າໄດ້ອາຫານບິນທະບາດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ມານຂັດຂວາງຕະຖາຄົດ ໄດ້ປະສົບສິ່ງບໍ່ແມ່ນບຸນແລ້ວ
ມານຜູ້ມີບາບ ທ່ານເຂົ້າໃຈວ່າ
ບາບບໍ່ໃຫ້ຜົນແກ່ເຮົາແນວນັ້ນແມ່ນບໍ?
ພວກເຮົາບໍ່ມີກິເລດເຄື່ອງກັງວົນ
ຢູ່ສຸກສະບາຍແທ້ນໍ ພວກເຮົາຈັກມີປີຕິເປັນພັກສາ
ຄືເທບຊັ້ນອາພັດສະຣະ ສັນນັ້ນ

ຄັ້ງນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ປິນດະສູດທີ ៨ ຈົບ**

# ៩. ກັດສະກະສູດ

## ວ່າດ້ວຍມານແປງກາຍເປັນຊາວນາ

[១៥៥] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້

ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທໍາມີກະຖາ ທີ່ປະກອບດ້ວຍນິບພານ ພິກຂຸເຫຼົ່ານັ້ນ ຕ່າງໃສ່ໃຈໃຫ້ສໍາເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງ່ຽງໂສດສະດັບທໍາຢູ່

ຄັ້ງນັ້ນ ມານຜູ້ມີບາບໄດ້ມີຄວາມຄິດດັ່ງນີ້ວ່າ ພຣະສະມະນະໂຄດົມນີ້ຊີ້ງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທໍາມີກະຖາທີ່ປະກອບດ້ວຍນິບພານ ຯລຯ ທາງທີ່ດີເຮົາເພິ່ງເຂົ້າໄປຫາພຣະສະມະນະໂຄດົມຮອດບ່ອນຢູ່ ເພື່ອລວງບໍລິສັດໃຫ້ຫຼົງເຂົ້າໃຈຜິດດີກວ່າ ຄັ້ງນັ້ນ ມານຜູ້ມີບາບຈຶ່ງແປງກາຍເປັນຊາວນາແບກໄຖໃຫຍ່ ຖືຄັນແຫຼມດ້າມຍາວ ຜົມຍາວຫຍຸ້ງຫຍອງ ນຸ່ງຜ້າເນື້ອຫຍາບ ຕີນທັງສອງເປື້ອນຕົມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ ຂ້າແດ່ ພຣະສະມະນະ ທ່ານເຫັນງົວພະລິພັດແດ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມານຜູ້ມີບາບ ທ່ານຕ້ອງການອັນໃດກ່ຽວກັບງົວພະລິພັດທັງຫຼາຍນໍ?

ມານຂາບທູນວ່າ ຂ້າແດ່ ພຣະສະມະນະ ຈັກຂຸ (ຕາ) ເປັນຂອງເຮົາ ຮູບເປັນຂອງເຮົາ ອາຍະຕະນະຄືວິນຍານອັນເກີດຈາກຈັກຂຸສໍາຜັດ (ຄວາມກະທົບທາງຕາ) ເປັນຂອງເຮົາ ທ່ານຈະໜີເຮົາໄປໄສພົ້ນໄດ້ນໍ?

ໂສຕະ (ຫູ) ເປັນຂອງເຮົາ ສັດທະ (ສຽງ) ເປັນຂອງເຮົາ ຯລຯ
ຄານະ (ດັງ) ເປັນຂອງເຮົາ ຄັນທະ (ກິ່ນ) ເປັນຂອງເຮົາ ຯລຯ
ຊີວຫາ (ລີ້ນ) ເປັນຂອງເຮົາ ຣົດເປັນຂອງເຮົາ ຯລຯ
ກາຍເປັນຂອງເຮົາ ໂຜດຖັບພະ (ສໍາຜັດທາງກາຍ) ເປັນຂອງເຮົາ ຯລຯ

ມະໂນ (ໃຈ) ເປັນຂອງເຮົາ ທໍາມາຣົມເປັນຂອງເຮົາ ອາຍະຕະນະຄືວິນຍານອັນເກີດຈາກມະໂນສໍາຜັດ (ຄວາມກະທົບທາງໃຈ) ເປັນຂອງເຮົາ ທ່ານຈະໜີເຮົາໄປໄສພົ້ນໄດ້ນໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມານຜູ້ມີບາບ ຈັກຂຸເປັນຂອງທ່ານ ຮູບເປັນຂອງທ່ານ ອາຍະຕະນະຄືວິນຍານອັນເກີດຈາກຈັກຂຸສໍາຜັດເປັນຂອງທ່ານໂດຍແທ້ ແຕ່ໃນບ່ອນໃດບໍ່ມີຈັກຂຸ ບໍ່ມີຮູບ ບໍ່ມີອາຍະຕະນະຄືວິນຍານອັນເກີດຈາກຈັກຂຸສໍາຜັດ ທີ່ນັ້ນບໍ່ແມ່ນທີ່ຢູ່ຂອງທ່ານ

ໂສຕະເປັນຂອງທ່ານ ສັດທະເປັນຂອງທ່ານ ອາຍະຕະນະຄືວິນຍານອັນເກີດຈາກໂສຕະສໍາຜັດ (ຄວາມກະທົບທາງຫູ) ເປັນຂອງທ່ານ ແຕ່ໃນບ່ອນໃດບໍ່ມີໂສຕະ ບໍ່ມີສັດທະ ບໍ່ມີອາຍະຕະນະຄືວິນຍານ ອັນເກີດຈາກໂສຕະສໍາຜັດ ທີ່ນັ້ນບໍ່ແມ່ນທີ່ຢູ່ຂອງທ່ານ

ຄານະເປັນຂອງທ່ານ ຄັນທະເປັນຂອງທ່ານ ອາຍະຕະນະຄືວິນຍານອັນເກີດຈາກ ຄານະສຳຜັດ (ຄວາມກະທົບທາງດັງ) ເປັນຂອງທ່ານ ຯລຯ

ຊິວຫາເປັນຂອງທ່ານ ຣົດເປັນຂອງທ່ານ ອາຍະຕະນະຄືວິນຍານອັນເກີດຈາກຊິວຫາສຳຜັດ(ຄວາມກະທົບທາງລີ້ນ) ເປັນຂອງທ່ານ ຯລຯ

ກາຍເປັນຂອງທ່ານ ໂຜດຖັບພະເປັນຂອງທ່ານ ອາຍະຕະນະຄືວິນຍານອັນເກີດຈາກກາຍສຳຜັດ (ຄວາມກະທົບທາງກາຍ) ເປັນຂອງທ່ານ ຯລຯ

ມະໂນເປັນຂອງທ່ານ ທຳມາຣົມທັງຫຼາຍເປັນຂອງທ່ານ ອາຍະຕະນະຄືວິນຍານ ອັນເກີດຈາກມະໂນສັມຜັດ (ຄວາມກະທົບທາງໃຈ) ເປັນຂອງທ່ານ ແຕ່ໃນບ່ອນໃດບໍ່ມີມະໂນ ບໍ່ມີທຳມາຣົມ ບໍ່ມີອາຍະຕະນະຄືວິນຍານອັນເກີດຈາກມະໂນສັມຜັດ ທີ່ນັ້ນບໍ່ແມ່ນທີ່ຢູ່ຂອງທ່ານ

ມານຂາບທູນ ວ່າ

ຊົນເຫຼົ່າໃດກ່າວເຖິງສິ່ງໃດວ່າ ນີ້ຂອງເຮົາ
ແລະຍັງກ່າວວ່າ ນີ້ແມ່ນເຮົາ
ຖ້າໃຈຂອງທ່ານຍັງຝັງຢູ່ໃນສິ່ງນັ້ນ
ສະມະນະ ທ່ານກໍຈະບໍ່ພົ້ນຈາກເຮົາໄປໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ຊົນເຫຼົ່າໃດ ກ່າວເຖິງສິ່ງໃດ ສິ່ງນັ້ນບໍ່ມີແກ່ເຮົາ
ຊົນເຫຼົ່າໃດກ່າວ ຊົນເຫຼົ່ານັ້ນ ບໍ່ແມ່ນເຮົາ
ມານຜູ້ມີບາບ ທ່ານຈົ່ງຮູ້ແນວນີ້ໄວ້
ທ່ານຫາບໍ່ເຫັນແມ່ນທາງຂອງເຮົາດອກ

ລຳດັບນັ້ນ ມານຜູ້ມີບາບ ຯລຯ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ກັດສະກະສູດທີ ໙ ຈົບ**

# ໑໐. ຣັດຊະສູດ

## ວ່າດ້ວຍມານອັນເຊີນພຣະຜູ້ມີພຣະພາກເຈົ້າໃຫ້ສະເຫວີຍຣາດຊະສົມບັດ

[໑໕໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຕູບກາງປ່າ ໃນຫິມະວັນຕະປະເທດແຄວ້ນໂກສົນ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີບຫຼີກຢູ່ໃນບ່ອນສະງັດເກີດຄວາມຮ່ຳເພິງແນວນີ້ວ່າ ເຮົາຈະສາມາດສະເຫວີຍຣາດຊະສົມບັດໂດຍທຳ ໂດຍທີ່ບໍ່ບຽດບຽນເອງ ບໍ່ໃຊ້ໃຫ້ຜູ້

ອື່ນບຽດບຽນ ບໍ່ເຮັດໃຫ້ເຂົາເສື່ອມເອງ ບໍ່ໃຊ້ຜູ້ອື່ນເຮັດເຂົາໃຫ້ເສື່ອມ ບໍ່ເຮັດເຂົາໃຫ້ເສົ້າໂສກເອງ ບໍ່ໃຊ້ຜູ້ອື່ນເຮັດເຂົາໃຫ້ເສົ້າໂສກບໍນໍ?

ຄັ້ງນັ້ນ ມານຜູ້ມີບາບຮູ້ຄວາມຮໍ່າເພິງຂອງພຣະຜູ້ມີພຣະພາກເຈົ້າດ້ວຍໃຈແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງສະເຫວີຍຣາດຊະສົມບັດເທີ້ນ ຂ້ານ້ອຍ ຂໍພຣະສຸດຄົດເຈົ້າຈົ່ງສະເຫວີຍຣາດຊະສົມບັດ ໂດຍທຳ ໂດຍທີ່ບໍ່ຕ້ອງບຽດບຽນເອງ ບໍ່ໃຊ້ຜູ້ອື່ນໃຫ້ບຽດບຽນ ບໍ່ເຮັດເຂົາໃຫ້ເສື່ອມເອງ ບໍ່ໃຊ້ຜູ້ອື່ນເຮັດເຂົາໃຫ້ເສື່ອມ ບໍ່ເຮັດເຂົາໃຫ້ເສົ້າໂສກເອງ ບໍ່ໃຊ້ຜູ້ອື່ນເຮັດເຂົາໃຫ້ເສົ້າໂສກ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມານຜູ້ມີບາບ ທ່ານເຫັນຫຍັງໃນໂຕເຮົາ ເປັນຫຍັງ? ຈຶ່ງເວົ້າກັບເຮົາແນວນີ້ວ່າ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງສະເຫວີຍຣາດຊະສົມບັດເທີ້ນ ຂ້ານ້ອຍ ຂໍພຣະສຸດຄົດເຈົ້າ ຈົ່ງສະເຫວີຍຣາດຊະສົມບັດໂດຍທຳ ໂດຍບໍ່ບຽດບຽນເອງ ບໍ່ໃຊ້ຜູ້ອື່ນໃຫ້ບຽດບຽນ ບໍ່ເຮັດ ເຂົາໃຫ້ເສື່ອມເອງ ບໍ່ໃຊ້ຜູ້ອື່ນເຮັດເຂົາໃຫ້ເສື່ອມ ບໍ່ເຮັດເຂົາໃຫ້ເສົ້າໂສກເອງ ບໍ່ໃຊ້ຜູ້ອື່ນ ເຮັດເຂົາໃຫ້ເສົ້າໂສກ

ມານຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອິດທິບາດ ໔ ປະການ ພຣະອົງຊົງຈະເລີນເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ຢູ່ສະເໝີ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ ກໍເມື່ອພຣະອົງຊົງພຣະປະສົງເພິ່ງອະທິຖານພູຫຼວງຊື່ວ່າຫິມະພານ ໃຫ້ເປັນຄຳທັງໝົດ ພູນັ້ນກໍເປັນຄຳທັງໝົດໄດ້ຈິງ

ພຣະຜູ້ມີພຣະພາກເຈົ້າຕັດກັບມານດ້ວຍພຣະຄາຖາ ວ່າ

ພູຄຳລ້ວນທັງໝ່ອຍ ເຖິງສອງທົບ
ກໍຍັງບໍ່ອີ່ມໃຈສຳລັບບຸກຄົນຄົນໜຶ່ງ
ບຸກຄົນຮູ້ດັ່ງນີ້ແລ້ວ ເພິ່ງປະພຶດສະງົບ
ຜູ້ໃດເຫັນທຸກມີກາມເປັນຕົ້ນເຫດແລ້ວ
ຜູ້ນັ້ນຈະເພິ່ງນ້ອມໄປໃນກາມໄດ້ແນວໃດ?
ບຸກຄົນຮູ້ອຸປະທິ°ວ່າເປັນເຄື່ອງຂ້ອງໃນໂລກແລ້ວ
ເພິ່ງສຶກສາເພື່ອກຳຈັດອຸປະທິນັ້ນ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ຣັດຊະສູດທີ ໑໐ ຈົບ**

**ວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ຕະຕິຍະວັກ

## ໝວດທີ່ ໒

## ໑. ສຳພະຫຸລະສູດ

### ວ່າດ້ວຍພິກຂຸຫຼາຍອົງ

[໑໕໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນສິລາວະດີ ແຄວ້ນສັກກະ ສະໄໝນັ້ນ ພິກຂຸຫຼາຍອົງເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ມານຜູ້ມີບາບແປງກາຍເປັນພາມ ໃສ່ຊະດາໃຫຍ່ ນຸ່ງໜັງເສືອ ເປັນຄົນແກ່ ຫຼັງກ່ອມ ຫັນໃຈສຽງດັງກຶດກາດ ຖືໄມ້ການເທົ້າເຮັດດ້ວຍໄມ້ໝາກເດື່ອ ເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ແລ້ວຈຶ່ງກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ ບັນພະຊິດຜູ້ຈະເລີນທັງຫຼາຍ ພວກທ່ານເປັນນັກບວດທີ່ຍັງໜຸ່ມແໜ້ນ ມີຜົມດຳປອດ ຢູ່ໃນໄວເປັນບ່າວກຳລັງເຕີບໃຫຍ່ ແຕ່ບໍ່ເພີດເພີນໃນການມະຄຸນທັງຫຼາຍ ຂໍພວກທ່ານຈົ່ງບໍຣິໂພກການທັງຫຼາຍອັນເປັນຂອງມະນຸດ ພວກທ່ານຢ່າລະການທີ່ເຫັນສະເພາະໜ້າແລ່ນໄປຫາການທີບອັນມີຢູ່ຕາມການເລີຍ

ພິກຂຸເຫຼົ່ານັ້ນ ຕອບວ່າ ພາມ ພວກຂ້າພະເຈົ້າບໍ່ໄດ້ລະການທີ່ເຫັນສະເພາະໜ້າ ແລ້ວແລ່ນໄປຫາການທິບອັນມີຢູ່ຕາມການເລີຍ ແຕ່ພວກຂ້າພະເຈົ້າລະການທິບອັນມີຢູ່ຕາມການແລ້ວແລ່ນໄປຫາທຳທີ່ເຫັນສະເພາະໜ້າ ພາມ ຍ້ອນວ່າການທັງຫຼາຍອັນມີຢູ່ຕາມການ ພຣະຜູ້ມີພຣະພາກເຈົ້າຕັດວ່າ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນການນີ້ມີໂທດຍິ່ງ ສ່ວນທຳນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນ

ນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເມື່ອພິກຂຸເຫຼົ່ານັ້ນ ກ່າວແນວນີ້ແລ້ວ ມານຜູ້ມີບາບຈຶ່ງສັ່ນຫົວ ແລບລີ້ນ ເຮັດໜ້າຜາກໃຫ້ຫຍູ້ເປັນ ໓ ຮອຍ ຢັນໄມ້ຄ້ອນເຖົ້າຈາກໄປ

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໃນບ່ອນໃກ້ພຣະອົງໃນບ່ອນນີ້ ຂ້າແດ່ ພຣະອົງຜູ້ຈະເລີນ ມີພາມຄົນໜຶ່ງໃສ່ຊະດາໃຫຍ່ນຸ່ງໜັງເສືອ ເປັນຄົນແກ່ ຫຼັງກ່ອມ ທັນໃຈສຽງດັງກຶດກາດ ຖືໄມ້ການເຫົ້າເຮັດດ້ວຍໄມ້ໝາກເດື່ອເຂົ້າມາຫາພວກຂ້າພຣະອົງຮອດບ່ອນຢູ່ ໄດ້ກ່າວກັບພວກຂ້າພຣະອົງດັ່ງນີ້ວ່າ ບັນພະຊິດຜູ້ຈະເລີນທັງຫຼາຍ ພວກທ່ານເປັນນັກບວດທີ່ຍັງໜຸ່ມແໜ້ນ ມີຜົມດຳປອດ ຢູ່ໃນໄວເປັນບ່າວກຳລັງເຕີບໃຫຍ່ ອັນຈະເລີນ ແຕ່ບໍ່ເພີດເພີນໃນກາມທັງຫຼາຍ ຂໍພວກທ່ານຈົ່ງບໍຣິໂພກກາມທັງຫຼາຍອັນເປັນຂອງມະນຸດ ພວກທ່ານຢ່າລະກາມທີ່ເຫັນສະເພາະໜ້າແລ້ວ ແລ່ນໄປຫາກາມທິບອັນມີຢູ່ຕາມການເລີຍ

ເມື່ອພາມກ່າວແນວນີ້ແລ້ວ ພວກຂ້າພຣະອົງໄດ້ກ່າວກັບພາມນັ້ນວ່າ ພາມ ພວກຂ້າພະເຈົ້າບໍ່ໄດ້ລະກາມທີ່ເຫັນສະເພາະໜ້າແລ້ວ ແລ່ນໄປຫາກາມທິບອັນມີຢູ່ຕາມການເລີຍ ແຕ່ພວກຂ້າພະເຈົ້າລະກາມທິບອັນມີຢູ່ຕາມການແລ້ວ ແລ່ນໄປຫາທຳທີ່ເຫັນສະເພາະໜ້າ ຍ້ອນວ່າກາມທັງຫຼາຍອັນມີຢູ່ຕາມການ ພຣະຜູ້ມີພຣະພາກເຈົ້າຕັດວ່າມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຍິ່ງ ສ່ວນທຳນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ພາມນັ້ນສັ່ນຫົວ ແລບລີ້ນ ເຮັດໜ້າຜາກໃຫ້ຫຍູ້ເປັນ ໓ ຮອຍ ຢັນໄມ້ຄ້ອນເຖົ້າຈາກໄປ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພິກຂຸທັງຫຼາຍ ນັ້ນບໍ່ແມ່ນພາມ ນັ້ນຄືມານຜູ້ມີບາບ ມາເພື່ອລວງພວກທ່ານໃຫ້ຫຼົງເຂົ້າໃຈຜິດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຕັດພຣະຄາຖານີ້ໃນເວລານັ້ນ ວ່າ

ຜູ້ໃດເຫັນທຸກມີກາມເປັນຕົ້ນເຫດແລ້ວ
ຜູ້ນັ້ນຈະເພິ່ງນ້ອມໄປໃນກາມໄດ້ແນວໃດ?
ບຸກຄົນຮູ້ອຸປະທິວ່າເປັນເຄື່ອງຂ້ອງໃນໂລກແລ້ວ
ເພິ່ງສຶກສາເພື່ອກຳຈັດອຸປະທິນັ້ນ[9]

**ສຳພະຫຸລະສູດທີ ໑ ຈົບ**

# ໔. ສະມິດທິສູດ

## ວ່າດ້ວຍພຣະສະມິດທິ

[໑໕໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນສີລາວະດີ ແຄວັ້ນສັກກະ ສະໄໝນັ້ນ ທ່ານພຣະສະມິດທິເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະ ໃຈຢູ່ໃນບ່ອນໃກ້ພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ທ່ານພຣະສະມິດທິຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄຶດຄຳນຶງແນວນີ້ວ່າ ເປັນລາບຂອງເຮົານໍ ທີ່ເຮົາໄດ້ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເປັນພຣະສາດສະດາຂອງເຮົາ ເປັນລາບຂອງເຮົານໍທີ່ເຮົາໄດ້ບວດໃນພຣະທຳວິໄນ ອັນພຣະສາດສະດາຕັດໄວ້ດີແລ້ວແນວນີ້ ເປັນລາບຂອງເຮົານໍທີ່ເຮົາໄດ້ເພື່ອນພົມມະຈາຣີ ຜູ້ມີສີນ ມີກັນລະຍານະທຳ ຄັ້ງນັ້ນ ມານຜູ້ມີບາບຮູ້ຄວາມຄຶດຄຳນຶງຂອງທ່ານພຣະສະມິດທິດ້ວຍໃຈແລ້ວ ເຂົ້າໄປຫາທ່ານພຣະສະມິດທິຮອດບ່ອນຢູ່ແລ້ວເຮັດສຽງດັງເປັນຕາຢ້ານ ເປັນຕາເຫຍືອງ ຄື ແຜ່ນດິນຈະຍຸບຫຼົ່ມລົງໃນບ່ອນໃກ້ທ່ານພຣະສະມິດທິ

ລຳດັບນັ້ນ ທ່ານພຣະສະມິດທິເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ໃນບ່ອນໃກ້ພຣະອົງໃນບ່ອນນີ້ ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນສະງັດເກີດຄວາມຄຶດຄຳນຶງແນວນີ້ວ່າ ເປັນລາບຂອງເຮົານໍ ທີ່ເຮົາໄດ້ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເປັນພຣະສາດສະດາຂອງເຮົາ ເປັນລາບຂອງເຮົານໍທີ່ເຮົາໄດ້ບວດໃນພຣະທຳວິໄນ ອັນພຣະສາດສະດາຕັດໄວ້ດີແລ້ວແນວນີ້ ເປັນລາບຂອງເຮົານໍ ທີ່ເຮົາໄດ້ເພື່ອນພົມມະຈາຣີ ຜູ້ມີສີນ ມີກັນລະຍານະທຳສຽງດັງເປັນຕາຢ້ານ ເປັນຕາເຫຍືອງ ຄືແຜ່ນດິນຈະຫຼົ່ມລົງ ໄດ້ມີແລ້ວໃນບ່ອນໃກ້ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ສະມິດທິ ນັ້ນບໍ່ແມ່ນແຜ່ນດິນຈະພັງລົງ ນັ້ນຄືມານຜູ້ມີບາບ ມາເພື່ອລວງໃຫ້ທ່ານຫຼົງເຂົ້າໃຈຜິດ ທ່ານຈົ່ງໄປເທີ້ນສະມິດທິ ຈົ່ງເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ໃນບ່ອນນັ້ນເທີ້ນ

ທ່ານພຣະສະມິດທິຮັບພຣະດຳຣັດແລ້ວລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

ແມ່ນໃນເທື່ອທີ ໔ ທ່ານພຣະສະມິດທິເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະ ໃຈຢູ່ໃນບ່ອນນັ້ນ ໆ

ແມ່ນໃນເທື່ອທີ ໔ ທ່ານພຣະສະມິດທິຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງ ແນວນີ້ວ່າ ຯລຯ

ແມ່ນໃນເທື່ອທີ ໔ ມານຜູ້ມີບາບຮູ້ຄວາມຄິດຄຳນຶງຂອງທ່ານພຣະສະມິດທິດ້ວຍໃຈ ຈຶ່ງ ເຮັດສຽງດັງເປັນຕາຢ້ານ ເປັນຕາເຫຍືອງ ຄື ແຜ່ນດິນຈະຫຼົ່ມລົງໃນບ່ອນໃກ້ທ່ານ ພຣະສະມິດທິ

ລຳດັບນັ້ນ ທ່ານພຣະສະມິດທິຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງກ່າວກັບມານ ຜູ້ມີບາບດ້ວຍ ຄາຖາ ວ່າ

ເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ
ເຮົາຮູ້ສະຕິແລະປັນຍາແລ້ວ ອັນໜຶ່ງ ຈິດກໍຕັ້ງໝັ້ນດີແລ້ວ
ທ່ານບັນດານຮູບຮ່າງໃຫ້ເປັນຕາຢ້ານປານໃດ
ກໍເຮັດໃຫ້ເຮົາຫວັ່ນໄຫວບໍ່ໄດ້

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ພິກຂຸສະມິດທິຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນ ບ່ອນນັ້ນເອງ

**ສະມິດທິສູດທີ ໔ ຈົບ**

# ໕. ໂຄທິກະສູດ

## ວ່າດ້ວຍພຣະໂຄທິກະ

[໑໕໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະໂຄທິກະຢູ່ທີ່ວິຫານກາສິລາຂ້າງພູອິຊິຄິລິ

ຄັ້ງນັ້ນ ທ່ານພຣະໂຄທິກະເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໄດ້ບັນ ລຸເຈໂຕວິມຸດຕິຊົ່ວເວລາ[໑] ພາຍຫຼັງທ່ານພຣະໂຄທິກະເສື່ອມຈາກເຈໂຕວິມຸດຕິຊົ່ວເວລານັ້ນ

ແມ່ນເທື່ອທີ ໔ ທ່ານພຣະໂຄທິກະເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໄດ້ບັນລຸເຈໂຕວິມຸດຕິຊົ່ວເວລາ ແມ່ນເທື່ອທີ ໔ ທ່ານກໍເສື່ອມຈາກເຈໂຕວິມຸດຕິຊົ່ວເວລານັ້ນ

ແມ່ນເທື່ອທີ ໓ ທ່ານພຣະໂຄທິກະເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໄດ້ບັນລຸເຈໂຕວິມຸດຕິຊົ່ວເວລາ ແມ່ນໃນເທື່ອທີ ໓ ທ່ານກໍເສື່ອມຈາກເຈໂຕວິມຸດຕິຊົ່ວເວລານັ້ນ

ແມ່ນເທື່ອທີ ໔ ທ່ານພຣະໂຄທິກະເປັນຜູ້ບໍ່ຜະໝາດ ຯລຯ ໄດ້ບັນລຸເຈໂຕວິມຸດຕິຊົ່ວເວລາ ແມ່ນໃນເທື່ອທີ ໔ ທ່ານກໍເສື່ອມຈາກເຈໂຕວິມຸດຕິຊົ່ວເວລານັ້ນ

ແມ່ນເທື່ອທີ ໕ ທ່ານພຣະໂຄທິກະເປັນຜູ້ບໍ່ຜະໝາດ ຯລຯ ໄດ້ບັນລຸເຈໂຕວິມຸດຕິຊົ່ວເວລາ ແມ່ນໃນເທື່ອທີ ໕ ທ່ານກໍເສື່ອມຈາກເຈໂຕວິມຸດຕິຊົ່ວເວລານັ້ນ

ແມ່ນເທື່ອທີ ໖ ທ່ານພຣະໂຄທິກະເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໄດ້ບັນລຸເຈໂຕວິມຸດຕິຊົ່ວເວລາ ແມ່ນໃນເທື່ອທີ ໖ ທ່ານກໍເສື່ອມຈາກເຈໂຕວິມຸດຕິຊົ່ວເວລານັ້ນ

ແມ່ນເທື່ອທີ ໗ ທ່ານພຣະໂຄທິກະເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ກໍໄດ້ບັນລຸເຈໂຕວິມຸດຕິຊົ່ວເວລານັ້ນອີກ

ຄັ້ງນັ້ນ ທ່ານພຣະໂຄທິກະໄດ້ມີຄວາມຄິດດັ່ງນີ້ວ່າ ເຮົາໄດ້ເສື່ອມຈາກເຈໂຕວິມຸດຕິຊົ່ວເວລາ ໖ ຄັ້ງແລ້ວ ທາງທີ່ດີເຮົາເພິ່ງນຳອາວຸດມາ

ລຳດັບນັ້ນ ມານຜູ້ມີບາບຮູ້ຄວາມຄິດຄຳນຶງຂອງທ່ານພຣະໂຄທິກະດ້ວຍໃຈແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ຂ້າແດ່ ພຣະມະຫາວີຣະຜູ້ມີປັນຍາຫຼາຍ
ຜູ້ຮຸ່ງເຮືອງດ້ວຍລິດແລະຍົດ
ຜູ້ກ້າວລ່ວງເວນແລະໄພທັງປວງ ຜູ້ມີພຣະຈັກຂຸ
ຂ້າພຣະອົງຂໍຖວາຍອະພິວາດພຣະບາດທັງສອງ
ຂ້າແດ່ ພຣະມະຫາວີຣະຜູ້ຊີງໄວ້ເຊິ່ງຄວາມຮຸ່ງເຮືອງ
ສາວົກຂອງພຣະອົງຖືກມໍລະນະຄອບງຳແລ້ວ
ມຸ້ງຫວັງຄວາມຕາຍຢູ່
ຂໍພຣະອົງຈົ່ງຊີງຫ້າມສາວົກຂອງພຣະອົງໄວ້ດ້ວຍເທີ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ຜາກົດໃນໝູ່ຊົນ
ສາວົກຂອງພຣະອົງຍິນດີໃນພຣະສາດສະໜາ
ມີໃຈຍັງບໍ່ໄດ້ບັນລຸ ຍັງເປັນພຣະເສຂະຢູ່
ຈະເພິ່ງມໍລະນະໄດ້ແນວໃດ?

ຂະນະນັ້ນ ທ່ານພຣະໂຄທິກະໄດ້ນຳອາວຸດມາ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ນີ້ຄືມານຜູ້ມີບາບ ຈຶ່ງໄດ້ຕັດກັບມານຜູ້ມີບາບດ້ວຍພຣະຄາຖາ ວ່າ

ນັກປາດທັງຫຼາຍເຮັດແນວນີ້ແລ
ຍ່ອມບໍ່ຫ່ວງໃຍໃນຊີວິດ
ພຣະໂຄທິກະຖອນຕັນຫາພ້ອມທັງຮາກ
ປະຣິນິບພານແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ມາເທີ້ນ ພິກຂຸທັງຫຼາຍ ເຮົາຈັກໄປສູ່ວິຫານກາສິລາ ຂ້າງພູອິຊິຄິລິ ເຊິ່ງເປັນສະຖານທີ່ທີ່ໂຄທິກະກຸນລະບຸດນຳອາວຸດມາ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ວິຫານກາສິລາ ຂ້າງພູອິຊິຄິລິ ພ້ອມດ້ວຍພິກຂຸຈຳນວນຫຼາຍ ໄດ້ທອດພຣະເນດເຫັນທ່ານພຣະໂຄທິກະນອນຄໍບິດຢູ່ເທິງຕຽງແຕ່ໄກ ກໍໃນເວລານັ້ນ ກຸ່ມຄວັນກຸ່ມໝອກທີ່ກຳລັງລອຍໄປທາງທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ທິດເບື້ອງເທິງ ທິດເບື້ອງລຸ່ມ ແລະ ທິດສຽງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເຫັນກຸ່ມຄວັນກຸ່ມໝອກທີ່ກຳລັງລອຍໄປທາງທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ທິດເບື້ອງເທິງ ທິດເບື້ອງລ່າງ ແລະ ທິດສຽງນັ້ນບໍ?

ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ຈຶ່ງຕັດວ່າ ພິກຂຸທັງຫຼາຍ ນັ້ນແລຄືມານຜູ້ມີບາບ ກຳລັງຄົ້ນຫາວິນຍານຂອງໂຄທິກະກຸນລະບຸດດ້ວຍຄິດວ່າ ວິນຍານຂອງໂຄທິກະກຸນລະບຸດສະຖິດຢູ່ທີ່ໃດ ພິກຂຸທັງຫຼາຍ ໂຄທິກະກຸນລະບຸດບໍ່ມີວິນຍານສະຖິດບໍ່ວ່າບ່ອນໃດແລ້ວໄດ້ປະຣິນິບພານເຮັດທີ່ສຸດແຫ່ງທຸກໄດ້ແລ້ວ

ຄັ້ງນັ້ນ ມານຜູ້ມີບາບຖືພິນະສີເຫຼືອງຄືໜ່ວຍໝາກຕູມສຸກ ເຂົ້າໄປເຝົ້າພຣະຜູ້ມີ ພຣະພາກຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ຂ້າພຣະອົງຄົ້ນຫາທັງທິດເບື້ອງເທິງ
ທິດເບື້ອງລຸ່ມ ທິດເບື້ອງຂວາງ
ຄືທັງທິດໃຫຍ່ແລະທິດສຽງ ກໍບໍ່ພໍ້
ທ່ານພຣະໂຄທິກະນັ້ນໄປສູ່ບ່ອນໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ນັກປາດຜູ້ໃດສົມບູນດ້ວຍປັນຍາ
ມີປົກກະຕິເພັ່ງພິນິດ ຍິນດີໃນຊານທຸກເມື່ອ
ພາກພຽນຢູ່ເມີດມື້ແລະຄືນ ບໍ່ເສຍດາຍຊີວິດ
ຊະນະກອງທັບມັດຈຸແລ້ວ ບໍ່ກັບມາສູ່ພົບໃໝ່
ນັກປາດນັ້ນ ຄືໂຄທິກະກຸນລະບຸດ
ໄດ້ຖອນຕັນຫາພ້ອມທັງຮາກ ປະຣິນິບພານແລ້ວ

ເມື່ອແລ້ວພົນໄດ້ຕົກຈາກຂີ້ແຮ້
ຂອງມານຜູ້ມີຄວາມເສົ້າໂສກ
ໃນລຳດັບນັ້ນ ມານຜູ້ເປັນຍັກນັ້ນເສຍໃຈ
ໄດ້ຫາຍໂຕໄປໃນບ່ອນນັ້ນເອງ

**ໂຄທິກະສູດທີ ໓ ຈົບ**

# ໔. ສັດຕະວັດສານຸພັນທະສູດ

## ວ່າດ້ວຍມານຫາໂອກາດທຳລາຍພຣະພຸດທະເຈົ້າຕະຫຼອດ ໗ ປີ

[໑໖໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຕົ້ນອະຊະປາລະນິໂຄດ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ມານຜູ້ມີບາບຕິດຕາມພຣະຜູ້ມີພຣະພາກເຈົ້າ ເພື່ອຖ້າຫາໂອກາດຕະຫຼອດ ໗ ປີ ກໍຍັງບໍ່ໄດ້ໂອກາດ ພາຍຫຼັງມານຜູ້ມີບາບໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ທ່ານຖືກຄວາມໂສກເສົ້າທັບຖົມຢູ່ບໍ?

ຈິ່ງມາຈຸກເຈົ່າຢູ່ໃນປ່າແນວນີ້
ທ່ານເສື່ອມຈາກຊັບສົມບັດແລ້ວແມ່ນບໍ?
ຫຼື ວ່າ ກຳລັງປາຖະໜາອັນໃດຢູ່
ທ່ານໄດ້ທຳຄວາມເສຍຫາຍຮ້າຍແຮງອັນໃດໄວ້ໃນໝູ່ບ້ານແມ່ນບໍ?
ເປັນຫຍັງ? ທ່ານຈິ່ງບໍ່ເປັນມິດກັບຊົນທັງປວງນໍ?
ຫຼື ວ່າ ທ່ານເປັນມິດກັບຄົນອື່ນບໍ່ເປັນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ທ່ານຜູ້ເປັນເຜົ່າພັນຂອງບຸກຄົນຜູ້ຜະໝາດ
ເຮົາຂຸດຮາກຂອງຄວາມໂສກເສົ້າໄດ້ໝົດແລ້ວ
ບໍ່ມີຄວາມຜິດ ບໍ່ເສົ້າໂສກ ເພ່ງພິນິດຢູ່
ເຮົາຕັດຄວາມຕິດແໜ້ນຄືຄວາມໂລບໃນພົບທັງປວງ
ບໍ່ມີອາສະວະ ເພ່ງພິນິດຢູ່

ມານຂາບທູນວ່າ

ຊົນເຫຼົ່າໃດກ່າວເຖິງສິ່ງໃດວ່າ ນີ້ຂອງເຮົາ
ແລະຍັງກ່າວວ່າ ແມ່ນເຮົາ
ຖ້າໃຈຂອງທ່ານຍັງຝັງຢູ່ໃນສິ່ງໃດ
ສະມະນະ ທ່ານກໍຈະບໍ່ພົ້ນຈາກເຮົາໄປໄດ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊົນເຫຼົ່າໃດກ່າວເຖິງສິ່ງໃດ ສິ່ງນັ້ນບໍ່ມີແກ່ເຮົາ
ຊົນເຫຼົ່າໃດກ່າວ ຊົນເຫຼົ່ານັ້ນ ບໍ່ແມ່ນເຮົາ
ມານຜູ້ມີບາບ ທ່ານຈົ່ງຮູ້ແນວນີ້ໄວ້
ທ່ານແນມບໍ່ເຫັນທາງຂອງເຮົາດອກ

ມານຂາບທູນວ່າ

ຖ້າທ່ານຮູ້ຈັກທາງອັນປອດໄພ
ເປັນບ່ອນໃຫ້ເຖິງອະມະຕະ ກໍຈົ່ງຈາກໄປຄົນດຽວເທີ້ນ
ຈະຕ້ອງສັ່ງສອນຄົນອື່ນເຮັດຫຍັງນໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊົນເຫຼົ່າໃດ ເປັນຜູ້ມຸ້ງໄປສູ່ຝັ່ງ
ຊົນເຫຼົ່ານັ້ນ ຍ່ອມຖາມເຖິງນິບພານອັນບໍ່ແມ່ນທີ່ຢູ່ຂອງມານ
ເຮົາຖືກຊົນເຫຼົ່ານັ້ນຖາມກໍຈັກບອກເຂົາວ່າ
ສິ່ງໃດເປັນອະມະຕະ ສິ່ງນັ້ນບໍ່ມີອຸປະທິ

ມານຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມີສະໂບກຂະຣະນີໃນບ່ອນບໍ່ໄກບ້ານ ຫຼື ນິຄົມໃນສະນັ້ນມີປູຢູ່ ແລະ ມີເດັກຊາຍ ຫຼື ເດັກຍິງ ຈຳນວນຫຼາຍໄດ້ອອກຈາກບ້ານຫຼືນິຄົມນັ້ນ

ແລ້ວ ເຂົ້າໄປສູ່ສະໂບກຂະຣະນີນັ້ນ ຈັບປູນັ້ນຂຶ້ນຈາກນໍ້າວາງໄວ້ເທິງບົກ ປູນັ້ນ ກໍຊູກ້າມທັງສອງຂຶ້ນ ເດັກຊາຍ ຫຼື ເດັກຍິງເຫຼົ່ານັ້ນ ເພິ່ງບິດ ເພິ່ງຫັກ ເພິ່ງທຳລາຍກ້າມນັ້ນທຸກ ໆ ກ້າມ ດ້ວຍໄມ້ ຫຼື ກ້ອນຫີນ ກໍເມື່ອເປັນແນວນັ້ນ ປູນັ້ນ ເມື່ອຖືກບິດກ້າມ ຖືກຫັກກ້າມ ຖືກທຳລາຍກ້າມໝົດແລ້ວ ຍ່ອມບໍ່ອາດໄຕ່ລົງໄປສູ່ສະໂບກຂະຣະນີນັ້ນຄືແຕ່ກ່ອນໄດ້ ສັນໃດ ອາລົມແມ່ນທຸກຂະນິດອັນເປັນວິໄສຂອງມານ ທີ່ເຮັດໃຫ້ສັດເສບຕິດ ເຮັດໃຫ້ສັດດິ້ນຣົນ ອາລົມນັ້ນທັງໝົດອັນພຣະຜູ້ມີພຣະພາກເຈົ້າຕັດຮອນ ຫັກຮານ ຢ່ຳຍີໝົດແລ້ວ ບັດນີ້ ຂ້າພຣະອົງຜູ້ ຖ້າຫາໂອກາດ ຍ່ອມບໍ່ອາດເຂົ້າໄປໃກ້ພຣະຜູ້ມີພຣະພາກເຈົ້າໄດ້ອີກແລ້ວ ສັນນັ້ນ

ຄັ້ງນັ້ນແລ ມານຜູ້ມີບາບໄດ້ພາສິດຄາຖາອັນເປັນທີ່ຕັ້ງແຫ່ງຄວາມເບື່ອໜ່າຍເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ກາເຫັນກ້ອນຫີນມີສີຄືມັນຂຸ້ນ
ຈຶ່ງບິນເຈີດລົງດ້ວຍຄິດວ່າ
ເຮົາຈັກໄດ້ອາຫານອັນໂອຊະໃນບ່ອນນີ້ແນ່ນອນ
ຄວາມຍິນດີເພິ່ງເກີດຂຶ້ນໄດ້ໂດຍແທ້
ແຕ່ກາກັບບໍ່ໄດ້ຄວາມຍິນດີໃນບ່ອນນັ້ນເລີຍ
ຈຶ່ງບິນເວີ້ນໜີໄປຈາກບ່ອນນັ້ນ

ຂ້າແດ່ ພຣະໂຄດົມ
ຂ້າພຣະອົງ ກໍຄືກາມາພົບກ້ອນຫີນ ສັນນັ້ນ
ຜູ້ຂ້າ ຂໍໜີໄປກ່ອນ

**ສັດຕະວັດສານຸພັນທະສູດທີ່ ៤ ຈົບ**

# ៥. ມາຣະທິຕຸສູດ

## ວ່າດ້ວຍລູກສາວມານ

[១៦១] ຄັ້ງນັ້ນ ມານຜູ້ມີບາບເມື່ອກ່າວຄາຖາອັນເປັນບ່ອນຕັ້ງແຫ່ງຄວາມເບື່ອໜ່າຍເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງໜີຈາກບ່ອນນັ້ນໄປນັ່ງຂັດສະມາທິທີ່ພື້ນດິນ ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ເປັນຜູ້ມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຈຸກເຈົ່າ ໝົດປະຕິພານ ໃຊ້ໄມ້ເຂ່ຍພື້ນດິນຢູ່

ຄັ້ງນັ້ນ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ເຂົ້າໄປຫາມານ ຜູ້ມີບາບຮອດບ່ອນຢູ່ແລ້ວ ກ່າວກັບມານຜູ້ມີບາບດ້ວຍຄາຖາ ວ່າ

ທ່ານພໍ່ ທ່ານເສຍໃຈດ້ວຍເຫດໃດ
ຫຼືເສົ້າໂສກເຖິງບຸຣຸດຄົນໃດ
ພວກເຮົາຈັກໃຊ້ບ້ວງຄືຣາຄະນຳມາຖວາຍ
ຄືບຸກຄົນຄ້ອງຊ້າງປ່ານຳມາ ສັນນັ້ນ
ບຸຣຸດນັ້ນ ຈັກຕົກຢູ່ໃນອຳນາດຂອງທ່ານພໍ່ຢ່າງແນ່ນອນ

ມານກ່າວວ່າ

ບຸຣຸດນັ້ນ ເປັນພຣະອະຣະຫັນ
ເປັນພຣະສຸຄົດໃນໂລກ ກ້າວລ່ວງບ້ວງແຫ່ງມານໄດ້ແລ້ວ
ຜູ້ໃດ ເພິ່ງນຳມາດ້ວຍຣາຄະບໍ່ໄດ້ງ່າຍ ໆ ດອກ
ຍ້ອນແນວນັ້ນ ເຮົາຈຶ່ງເສົ້າໂສກຢູ່

ຄັ້ງນັ້ນ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະ ນາງຣາຄາ ເຂົ້າໄປເຝົ້າພຣະຜູ້ມີພຣະພາກຮອດບ່ອນຢູ່ ແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະສະມະນະ ພວກຂ້ານ້ອຍຈະຂໍປົນນິບັດພຣະບາດທັງສອງຂອງພຣະອົງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງໃສ່ພຣະທະໄທ ເຖິງຄຳຂອງລູກສາວມານນັ້ນ ເພາະວ່າພຣະອົງຊົງລຸດພົ້ນແລ້ວ ຍ້ອນທຳເປັນທີ່ສິ້ນອຸປະທິອັນປະເສີດແລ້ວ

ຕໍ່ມາ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະ ນາງຣາຄາ ພາກັນຈາກໄປໃນບ່ອນສົມຄວນແລ້ວເປີກສາກັນແນວນີ້ວ່າ ພວກບຸຣຸດມີຄວາມປະສົງຕ່າງກັນ ທາງທີ່ດີ ພວກເຮົາຄວນເນຣະມິດເພດເປັນສາວໄວລຸ້ນ ຄົນລະໜຶ່ງຮ້ອຍ

ລຳດັບນັ້ນ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະ ນາງຣາຄາ ຈຶ່ງເນຣະມິດເພດເປັນສາວໄວລຸ້ນຄົນລະໜຶ່ງຮ້ອຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວຂາບທູນດັ່ງນີ້ວ່າ ຂ້າແດ່ພຣະສະມະນະ ພວກຂ້ານ້ອຍຈະຂໍປົນນິບັດພຣະບາດທັງສອງຂອງພຣະອົງ

ພຣະຜູ້ມີພຣະພາກເຈົ້າບໍ່ຊົງໃສ່ພຣະທະໄທເຖິງຄຳຂອງລູກສາວມານນັ້ນ ເພາະວ່າພຣະອົງຊົງລຸດພົ້ນ ຍ້ອນທຳເປັນທີ່ສິ້ນອຸປະທິອັນປະເສີດແລ້ວ

ຕໍ່ມາ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະ ນາງຣາຄາ ພາກັນຈາກໄປໃນບ່ອນສົມຄວນແລ້ວເປີກສາກັນແນວນີ້ວ່າ ພວກບຸຣຸດມີຄວາມປະສົງຕ່າງກັນ ທາງທີ່ດີພວກເຮົາຄວນເນຣະມິດເພດເປັນຜູ້ຍິງທີ່ຍັງບໍ່ເຄີຍເກີດລູກຄົນລະໜຶ່ງຮ້ອຍ

ລຳດັບນັ້ນ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ເນຣະມິດເພດເປັນຍິງທີ່ຍັງບໍ່ເຄີຍເກີດລູກຄົນລະໜຶ່ງຮ້ອຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວຂາບທູນແນວນີ້ວ່າ ຂ້າແດ່ ພຣະສະມະນະ ພວກຂ້ານ້ອຍຈະຂໍປົນນິບັດພຣະບາດທັງສອງຂອງພຣະອົງ

ແມ່ນເຖິງແນວນັ້ນ ພຣະຜູ້ມີພຣະພາກເຈົ້າກໍບໍ່ໄດ້ຊົງໃສ່ພຣະຫະໄທເຖິງເລີຍ ເພາະວ່າພຣະອົງຊົງລຸດພົ້ນ ຍ້ອນທຳເປັນທີ່ສິ້ນອຸປະທິອັນປະເສີດແລ້ວ

ຝ່າຍນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ພາກັນຈາກໄປໃນບ່ອນສົມຄວນແລ້ວເປີກສາກັນແນວນີ້ວ່າ ພວກບຸຣຸດມີຄວາມປະສົງຕ່າງກັນ ທາງທີ່ດີພວກເຮົາຄວນເນຣະມິດເພດເປັນຍິງເກີດລູກແລ້ວເທື່ອດຽວຄົນລະໜຶ່ງຮ້ອຍ

ລຳດັບນັ້ນ ນາງຕັນຫາ ຯລຯ ຈຶ່ງເນຣະມິດເພດເປັນຍິງເກີດລູກແລ້ວເວລາດຽວຄົນລະໜຶ່ງຮ້ອຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ເນື່ອງຈາກພຣະອົງຊົງລຸດພົ້ນຍ້ອນທຳເປັນທີ່ສິ້ນອຸປະທິອັນປະເສີດແລ້ວ

ຕໍ່ມາ ນາງຕັນຫາ ຯລຯ ຈຶ່ງເນຣະມິດເພດເປັນຍິງທີ່ເກີດລູກແລ້ວ ໔ ເທື່ອ ຄົນລະໜຶ່ງຮ້ອຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ເພາະວ່າພຣະອົງຊົງລຸດພົ້ນ ຍ້ອນທຳເປັນທີ່ສິ້ນອຸປະທິອັນປະເສີດແລ້ວ

ລຳດັບນັ້ນ ນາງຕັນຫາ ຯລຯ ຈຶ່ງເນຣະມິດເພດເປັນຍິງກາງຄົນຄົນລະໜຶ່ງຮ້ອຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ເນື່ອງຈາກພຣະອົງຊົງລຸດພົ້ນ ຍ້ອນທຳເປັນທີ່ສິ້ນອຸປະທິອັນປະເສີດແລ້ວ

ລຳດັບນັ້ນ ນາງຕັນຫາ ຯລຯ ຈຶ່ງເນຣະມິດເພດເປັນຍິງແກ່ຄົນລະໜຶ່ງຮ້ອຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ເພາະວ່າພຣະອົງຊົງລຸດພົ້ນ ຍ້ອນທຳເປັນທີ່ສິ້ນອຸປະທິອັນປະເສີດແລ້ວ

ລຳດັບນັ້ນ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະ ນາງຣາຄາ ພາກັນຈາກໄປໃນບ່ອນສົມຄວນແລ້ວເວົ້າກັນວ່າ ເລື້ອງນີ້ຈິງດັ່ງບິດາຂອງເຮົາໄດ້ເວົ້າໄວ້ວ່າ

ບຸຣຸດນັ້ນເປັນພຣະອະຣະຫັນ
ເປັນພຣະສຸຄົດໃນໂລກ ກ້າວລ່ວງບ້ວງແຫ່ງມານໄດ້ແລ້ວ
ຜູ້ໃດ ເພິ່ງນຳມາດ້ວຍຣາຄະບໍ່ໄດ້ງ່າຍ ໆ
ຍ້ອນແນວນັ້ນ ເຮົາຈຶ່ງເສົ້າໂສກຫຼາຍ

ອັນໜຶ່ງ ຖ້າພວກເຮົາເພິ່ງເລົ້າໂລມສະມະນະ ຫຼື ພາມໃດທີ່ຍັງບໍ່ໝົດຣາຄະ ດ້ວຍຄວາມພະຍາຍາມແນວນີ້ ຫະໄທຂອງສະມະນະ ຫຼື ພາມນັ້ນເພິ່ງແຕກ ໂລຫິດອຸ່ນ ໆ ເພິ່ງພຸ່ງອອກຈາກປາກ ຫຼື ເຂົາເພິ່ງເປັນບ້າ ຫຼື ວ່າ ມີຈິດຟຸ້ງຊ່ານ ຄືກັບຕົ້ນອໍ້ດິບ ຖືກລົມພັດຂາດຫ່ຽວເສົາແຫ້ງໄປ ແມ່ນສັນໃດ ສະມະນະຫຼືພາມນັ້ນ ເພິ່ງຫງອຍເຫງົາ ຊູບຊີດຫ່ຽວແຫ້ງໄປຄືກັນສັນນັ້ນ

ເມື່ອແລ້ວ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ພາກັນເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ຢືນຢູ່ບ່ອນທີ່ສົມຄວນ ນາງຕັນຫາລູກສາວມານຢືນຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ທ່ານຖືກຄວາມໂສກເສົ້າທັບຖົມຢູ່ແມ່ນບໍ?
ຈຶ່ງມາຈູກເຈົ່າຢູ່ໃນປ່າແນວນີ້
ທ່ານເສື່ອມຈາກຊັບສົມບັດແລ້ວແມ່ນບໍ?
ຫຼື ວ່າ ກຳລັງປາຖະໜາອັນໃດຢູ່ບໍ?
ທ່ານໄດ້ທຳຄວາມຜິດຮ້າຍແຮງອັນໃດໄວ້ໃນໝູ່ບ້ານແມ່ນບໍ?
ເປັນຫຍັງ? ທ່ານຈຶ່ງບໍ່ເປັນມິດກັບຊົນທັງປວງບໍ?
ຫຼື ວ່າ ທ່ານເປັນມິດກັບຄົນອື່ນບໍ່ໄດ້ໆ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ເຮົາຊະນະເສນາມານຄືຮູບທີ່ໜ້າຮັກ
ແລະຮູບທີ່ໜ້າພໍໃຈໄດ້ແລ້ວ ເພ່ງພິນິດຢູ່ຜູ້ດຽວ ໄດ້ຮູ້ຄວາມສຸກ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ເປັນມິດກັບຊົນທັງປວງ
ຍ້ອນຄວາມເປັນມິດກັບຄົນອື່ນ ບໍ່ສຳເລັດປະໂຫຍດນີ້ແກ່ເຮົາໄດ້

ລຳດັບນັ້ນ ນາງອໍຣະດີລູກສາວມານ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ພິກຂຸໃນສາດສະໜານີ້ຫຼາຍໄປດ້ວຍວິຫານທຳແນວໃດ?
ຈຶ່ງຂ້າມໂອຄະທັງ ໕ ໄດ້
ບັດນີ້ ທ່ານຂ້າມໂອຄະທີ ໖ ໄດ້ແລ້ວບໍ?
ບຸກຄົນເພ່ງຊານແນວໃດໄວ້ຫຼາຍ
ການສັນຍາທັງຫຼາຍຈັບຍຶດເຂົາບໍ່ໄດ້ ຈຶ່ງຫ່າງເຫີນໄປ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

ບຸກຄົນມີກາຍອັນສະງົບ ມີຈິດລຸດພົ້ນດີແລ້ວ

ເປັນຜູ້ບໍ່ມີອັນໃດປັນເຄື່ອງປຸງແຕ່ງ
ມີສະຕິ ບໍ່ມີຄວາມອາໄລ ຮູ້ທົ່ວທຳ
ມີປົກກະຕິເພ່ງພິນິດຢູ່ດ້ວຍຊານທີ ໔ ອັນຫາວິຕົກບໍ່ໄດ້
ຍ່ອມບໍ່ກຳເຣີບ ບໍ່ແຜ່ຊ່ານໄປ ບໍ່ເປັນຜູ້ຫຍໍ້ທໍ້

ພິກຂຸໃນສາດສະໜານີ້ຫຼາຍໄປດ້ວຍວິຫານທຳແນວນີ້
ຈຶ່ງຂ້າມໂອຄະທັງ ໕ ໄດ້
ບັດນີ້ ທ່ານຂ້າມໂອຄະທີ ໖ ໄດ້ແລ້ວ
ພິກຂຸຜູ້ເພ່ງຊານແນວນີ້ໄວ້ຫຼາຍ
ການສັນຍາທັງຫຼາຍຈັບຍຶດທ່ານບໍ່ໄດ້ ຈຶ່ງຫ່າງເຫີນໄປ

ລຳດັບນັ້ນ ນາງຣາຄາລູກສາວມານ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ພຣະສາດສະດາຜູ້ນຳໝູ່ສົງ
ໄດ້ຕັດຕັນຫາຂາດແລ້ວ ແລະຊົນຜູ້ມີສັດທາເປັນຈຳນວນຫຼາຍ
ຈັກປະພຶດຕາມໄດ້ແນ່
ພຣະສາດສະດາພຣະອົງນີ້ເປັນຜູ້ບໍ່ມີຄວາມອາໄລ
ຕັດຂາດຈາກກຳມືມັດຈຸຣາດໄດ້ແລ້ວ
ຈັກນຳໝູ່ຊົນເປັນຈຳນວນຫຼາຍໄປສູ່ຝັ່ງໄດ້ແນ່ນອນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພຣະຕະຖາຄົດທັງຫຼາຍຜູ້ເປັນມະຫາວີຣະ
ຍ່ອມນຳສັດໄປດ້ວຍພຣະສັດທຳ
ເມື່ອພຣະຕະຖາຄົດນຳໄປຢູ່ໂດຍທຳ
ຄວາມຣິດສະຫຍາຈະມີແກ່ທ່ານຜູ້ຮູ້ໄດ້ແນວໃດ

ລຳດັບນັ້ນ ລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ພາກັນເຂົ້າໄປຫາມານຜູ້ມີບາບຮອດບ່ອນຢູ່ ມານຜູ້ມີບາບເຫັນລູກສາວມານ ຄື ນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ມາແຕ່ໄກ ຈຶ່ງໄດ້ກ່າວຄາຖາທັງຫຼາຍ ວ່າ

ທ່ານຊ່າງໂງ່ຈ້າ ພາກັນທຳລາຍພູດ້ວຍກ້ານບົວ
ຂຸດພູດ້ວຍເລັບ ຫຍ້ຳເຫຼັກດ້ວຍແຂ້ວ
ພວກທ່ານອາໄສພຣະໂຄດົມຫາທີ່ເພິ່ງ

ຈະເປັນຄືຄົນວາງຫີນໄວ້ເທິງຫົວແລ້ວເຈາະຫາທີ່ເພິ່ງໃນບາດານ ສັນນັ້ນ

ເປັນຫຍັງ ທ່ານຄືເອົາໜາມມາປັກເອີກ (ພໍ່) ຈົ່ງຫຼີກໄປສາເທີ້ນ

(ພຣະທຳສັງຄາຫະກາຈານກ່າວວ່າ)

ພຣະສາດສະດາໄດ້ຂັບໄລ່ນາງຕັນຫາ ນາງອໍຣະດີ ແລະ ນາງຣາຄາ
ຜູ້ມີຮູບໜ້າອະພິຣົມຍິ່ງ ເຊິ່ງໄດ້ມາໃນບ່ອນນັ້ນໃຫ້ໜີໄປ
ຄືລົມພັດປຸຍນຸ່ນໃຫ້ປິວໄປ ສັນນັ້ນ

**ມາຣະທິຕຸສູດທີ ໕ ຈົບ**

**ວັກທີ ໓ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ສຳພະຫຸລະສູດ
໒. ໂຄທິກະສູດ
໓. ສະມິດທິສູດ
໔. ສັດຕະວັດສານຸພັນທະສູດ
໕. ມາຣະທິຕຸສູດ

ພຣະສູດວ່າດ້ວຍມານ ໕ ສູດນີ້ ພຣະພຸດທະເຈົ້າຜູ້ປະເສີດຊົງສະແດງໄວ້ແລ້ວ

**ມາຣະສັງຍຸດ ຈົບບໍລິບູນ**

# ๕. ພິກຂຸນີສັງຍຸດ

## ໑. ອາລະວິກາສູດ

### ວ່າດ້ວຍອາລະວິກາພິກຂຸນີ

[໑໘໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ເມື່ອເວລາເຊົ້າ ອາລະວິກາພິກຂຸນີຄອງອັນຕະຣະວາສົກຖືບາດ ແລະຈີວອນ ເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສຳເລັດແລ້ວ ຕ້ອງການວິເວກ (ຄວາມສະຫງັດ) ຈຶ່ງເຂົ້າໄປໃນປ່າອັນທະວັນ ລຳດັບນັ້ນມານຜູ້ມີບາບປະສົງຈະໃຫ້ອາລະວິກາພິກຂຸນີເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະປະສົງຈະໃຫ້ເຄື່ອນຈາກວິເວກ ຈຶ່ງເຂົ້າໄປຫາອາລະວິກາພິກຂຸນີຮອດບ່ອນຢູ່ ໄດ້ກ່າວກັບອາລະວິກາພິກຂຸນີດ້ວຍຄາຖາ ວ່າ

ໃນໂລກບໍ່ມີເຄື່ອງສະບັດອອກ (ຈາກທຸກ)
ທ່ານຈັກເຮັດຫຍັງດ້ວຍວິເວກນີ້ນໍ?
ທ່ານຈົ່ງເສບຄວາມຍິນດີໃນກາມເທີ້ນ
ຢ່າໄດ້ມີຄວາມເສຍໃຈໃນພາຍຫຼັງເລີຍ

ລຳດັບນັ້ນ ອາລະວິກາພິກຂຸນີໄດ້ມີຄວາມຄິດດັ່ງນີ້ວ່າ ນີ້ໃຜນໍ? ມາກ່າວຄາຖາ ຈະເປັນມະນຸດ ຫຼື ອະມະນຸດກັນແນ່ ອາລະວິກາພິກຂຸນີໄດ້ມີຄວາມຄິດດັ່ງນີ້ອີກວ່າ ນີ້ຄືມານຜູ້ມີບາບປະສົງຈະໃຫ້ເຮົາເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກແລະປະສົງຈະໃຫ້ເຄື່ອນຈາກວິເວກ ຈຶ່ງກ່າວຄາຖາ ອາລະວິກາພິກຂຸນີຮູ້ວ່າ ນີ້ຄື ມານຜູ້ມີບາບ ຈຶ່ງໄດ້ກ່າວກັບມານຜູ້ມີບາບດ້ວຍຄາຖາວ່າ

ໃນໂລກນີ້ມີເຄື່ອງສະບັດອອກ (ຈາກທຸກ)
ເຮົາສຳຜັດດີແລ້ວດ້ວຍປັນຍາ
ມານຜູ້ມີບາບ ຜູ້ເປັນເຜົ່າພັນຂອງຜູ້ຜະໝາດ
ທ່ານບໍ່ຮູ້ຈັກທາງນັ້ນ

ກາມທັງຫຼາຍປຽບດ້ວຍຫອກແລະຫຼາວ
ກອງກາມທັງຫຼາຍນັ້ນຄືກັບຜີຮ້າຍ

ທ່ານກ່າວຄວາມຍິນດີໃນການໃດ
ຄວາມບໍ່ຍິນດີນັ້ນໄດ້ມີແລ້ວແກ່ເຮົາ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ອາລະວິກາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ອາລະວິກາສູດທີ ໑ ຈົບ**

# ໘. ໂສມາສູດ

## ວ່າດ້ວຍໂສມາພິກຂຸນີ

[໑໖໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເມື່ອເວລາເຊົ້າ ໂສມາພິກຂຸນີຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນກຣຸງສາວັດຖີ ກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສຳເລັດແລ້ວ ເຂົ້າໄປສູ່ປ່າອັນທະວັນເພື່ອພັກກາງເວັນ ເຖິງປ່າອັນທະວັນແລ້ວຈຶ່ງນັ່ງພັກກາງເວັນທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ

ລຳດັບນັ້ນ ມານຜູ້ມີບາບປະສົງຈະໃຫ້ໂສມາພິກຂຸນີເກີດຄວາມຍ້ານ ຄວາມສັ່ນເຊັນຄວາມຂົນຫົວລຸກ ແລະ ປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງເຂົ້າໄປຫາ ໂສມາພິກຂຸນີເຖິງບ່ອນນັ່ງພັກແລ້ວ ໄດ້ກ່າວກັບໂສມາພິກຂຸນີດ້ວຍຄາຖາວ່າ

ຖານະໃດອັນປະເສີດຢ່າງຍິ່ງ
ຄືພຣະອະຣະຫັດເຊິ່ງລືສີທັງຫຼາຍເພິ່ງບັນລຸ
ອັນບຸກຄົນເຫຼົ່າອື່ນໃຫ້ສຳເລັດໄດ້ຍາກ
ທ່ານເປັນແມ່ຍິງມີປັນຍາທໍ່ ໔ ນິ້ວ
ບໍ່ສາມາດຈະບັນລຸຖານະນັ້ນໄດ້ດອກ

ລຳດັບນັ້ນ ໂສມາພິກຂຸນີໄດ້ມີຄວາມຄິດດັ່ງນີ້ວ່າ ນີ້ໃຜນໍ? ມາກ່າວຄາຖາ ຈະເປັນມະນຸດຫຼືອະມະນຸດກັນແນ່ ທັນໃດນັ້ນ ໂສມາພິກຂຸນີໄດ້ມີຄວາມຄິດດັ່ງນີ້ອີກວ່າ ນີ້ຄື ມານຜູ້ມີບາບປະສົງຈະໃຫ້ເຮົາເກີດຄວາມຍ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະ ປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງກ່າວຄາຖາ ວ່າ

ເມື່ອຈິດຕັ້ງໝັ້ນດີ ເມື່ອຍານເປັນໄປຢູ່
ເມື່ອເຫັນແຈ້ງທຳໂດຍຖືກຕ້ອງ

ຄວາມເປັນຍິງຈະເຮັດຫຍັງເຮົາໄດ້
ຜູ້ໃດມີຄວາມຄິດເຫັນຈະແຈ້ງແນວນີ້ວ່າ
ເຮົາເປັນສະຕີ ຫຼື ວ່າເຮົາເປັນບຸຣຸດ
ຜູ້ທີ່ຍັງມີຄວາມເກາະກ່ຽວວ່າເຮົາ ມີຢູ່
ມານຈິ່ງໄປກ່າວກັບຜູ້ນັ້ນເທີ້ນ໌

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ໂສມາພິກຂຸນີຮູ້ຈັກເຮົາ ຈິ່ງຫາຍໂຕໄປໃນບ່ອນນັ້ນເອງ

**ໂສມາສູດທີ ໘ ຈົບ**

# ໙. ກີສາໂຄຕະມີສູດ

## ວ່າດ້ວຍກີສາໂຄຕະມີພິກຂຸນີ

[໑໖໘] ເລື້ອງເກີດຂຶ້ນໃນນະຄອນສາວັດຖີ

ເມື່ອເວລາເຊົ້າ ກີສາໂຄຕະມີພິກຂຸນີຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສຳເລັດແລ້ວ ເຂົ້າໄປສູ່ປ່າອັນທະວັນເພື່ອພັກກາງເວັນ ເຖິງປ່າອັນທະວັນແລ້ວ ຈິ່ງນັ່ງພັກກາງເວັນທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ລຳດັບນັ້ນ ມານຜູ້ມີບາບປະສົງຈະໃຫ້ກີສາໂຄຕະມີພິກຂຸນີເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະ ປະສົງຈະໃຫ້ເຄື່ອນຈາກສະມາທິ ຈິ່ງເຂົ້າໄປຫາກີສາໂຄຕະມີພິກຂຸນີເຖິງບ່ອນນັ່ງພັກແລ້ວ ໄດ້ກ່າວກັບກີສາໂຄຕະມີພິກຂຸນີດ້ວຍຄາຖາ ວ່າ

ບຸດທ່ານຕາຍແລ້ວ ມາຢູ່ກາງປ່າຄົນດຽວ
ຄືຄົນທີ່ຮ້ອງໄຫ້ຢູ່ໂດດດ່ຽວ
ກຳລັງສະແຫວງຫາບຸຣຸດ ຫຼື ຫາອັນໃດຢູ່ບໍ?

ລຳດັບນັ້ນ ກີສາໂຄຕະມີພິກຂຸນີໄດ້ມີຄວາມຄິດດັ່ງນີ້ວ່າ ນີ້ໃຜນໍ? ມາກ່າວຄາຖາ ຈະເປັນມະນຸດ ຫຼື ອະມະນຸດກັນແນ່ ທັນໃດນັ້ນ ກີສາໂຄຕະມີພິກຂຸນີໄດ້ມີຄວາມຄິດດັ່ງນີ້ອີກວ່າ ນີ້ຄືມານຜູ້ມີບາບ ປະສົງຈະໃຫ້ເຮົາເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນພອງສະຍອງຫົວ ແລະປະສົງຈະໃຫ້ເຄື່ອນຈາກສະມາທິ ຈິ່ງກ່າວຄາຖາ ວ່າ

ບຸດເຮົາຕາຍມາດົນແລ້ວ
ບຸຣຸດທັງຫຼາຍກໍມີຄວາມຕາຍເປັນບ່ອນສຸດຄືກັນ

ເຮົາບໍ່ເສົ້າໂສກ ບໍ່ຮ້ອງໄຫ້ ບໍ່ຢ້ານຄວາມຕາຍນັ້ນດອກ

ທ່ານຜູ້ມີອາຍຸ ເຮົາກຳຈັດຄວາມເພີດເພີນໃນສິ່ງທັງປວງ
ທຳລາຍຄວາມມືດ ຊະນະກອງທັບມັດຈຸແລ້ວ ຢູ່ຢ່າງບໍ່ມີອາສະວະ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ກິສາໂຄຕະມີພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ກິສາໂຄຕະມີສູດທີ ໓ ຈົບ**

# ໔. ວິຊະຍາສູດ

## ວ່າດ້ວຍວິຊະຍາພິກຂຸນີ

[໑໖໔] ເລື້ອງເກີດຂຶ້ນໃນນະຄອນສາວັດຖີ

ເມື່ອເວລາເຊົ້າ ວິຊະຍາພິກຂຸນີຄອງອັນຕະຣະວາສົກ ຯລຯ ຈຶ່ງນັ່ງພັກກາງເວັນທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ລຳດັບນັ້ນ ມານຜູ້ມີບາບປະສົງຈະໃຫ້ວິຊະຍາພິກຂຸນີເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະ ປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງເຂົ້າໄປຫາວິຊະຍາພິກຂຸນີເຖິງບ່ອນນັ່ງພັກແລ້ວ ໄດ້ກ່າວກັບວິຊະຍາພິກຂຸນີດ້ວຍຄາຖາ ວ່າ

ທ່ານຍັງສາວມີຮູບງາມ ແລະ ເຮົາເອງກໍຍັງໜຸ່ມບາວ
ມາເທີ້ນນ້ອງນາງ ເຮົາມາຮ່ວມບັນເລງດົນຕີເຄື່ອງຫ້າ[១]
ໃຫ້ເບີກບານມ່ວນຊື່ນກັນເທີ້ນ

ລຳດັບນັ້ນ ວິຊະຍາພິກຂຸນີໄດ້ມີຄວາມຄິດດັ່ງນີ້ວ່າ ນີ້ໃຜນໍ? ມາກ່າວຄາຖາ ຈະເປັນມະນຸດຫຼືອະມະນຸດກັນແນ່ ທັນໃດນັ້ນ ວິຊະຍາພິກຂຸນີໄດ້ມີຄວາມຄິດດັ່ງນີ້ອີກວ່າ ນີ້ຄືມານຜູ້ມີບາບ ປະສົງຈະໃຫ້ເຮົາເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງກ່າວຄາຖາວ່າ

ມານ ຮູບ ສຽງ ກິ່ນ ຣົດ
ແລະໂຜດຖັບພະ ເຊິ່ງເປັນທີ່ໜ້າອອນຊອນໃຈ
ເຮົາຂໍມອບໃຫ້ທ່ານຜູ້ດຽວ ເຮົາບໍ່ຕ້ອງການສິ່ງນັ້ນ
ເຮົາອຶດອັດຣະອາດ້ວຍກາຍເນົ່ານີ້
ທີ່ມີແຕ່ຈະແຕກທຳລາຍເປື່ອຍເພໄປ

ການຕັນຫາເຮົາຖອນໄດ້ແລ້ວ
ຄວາມມືດໃນສັດທັງຫຼາຍທີ່ຢູ່ໃນຮູບພົບ
ທີ່ດຳລົງຢູ່ໃນອະຮູບພົບແລະໃນສະມາບັດອັນສະຫງົບທັງປວງ
ເຮົາກໍກຳຈັດໄດ້ໝົດແລ້ວ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ວິຊະຍາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ວິຊະຍາສູດທີ ໔ ຈົບ**

# ໕. ອຸບປະລະວັນນາສູດ

## ວ່າດ້ວຍອຸບົນວັນນາພິກຂຸນີ

[໑໖໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເມື່ອເວລາເຊົ້າ ອຸບົນວັນນາພິກຂຸນີຄອງອັນຕະຣະວາສົກ ຖືບາດແລະຈີວອນ ຯລຯ ໄດ້ຢືນຢູ່ທີ່ເຫງົ້າຕົ້ນສາລະເຊິ່ງມີດອກບານເດຍລະດາດຕົ້ນໜຶ່ງ ລຳດັບນັ້ນ ມານຜູ້ມີບາບປະສົງຈະໃຫ້ອຸບົນວັນນາພິກຂຸນີເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະ ປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງເຂົ້າໄປຫາອຸບົນວັນນາພິກຂຸນີເຖິງທີ່ຢືນຢູ່ ໄດ້ກ່າວກັບອຸບົນວັນນາພິກຂຸນີດ້ວຍຄາຖາ ວ່າ

ພິກຂຸນີ ທ່ານເຂົ້າໄປໃກ້ຕົ້ນສາລະ
ເຊິ່ງມີດອກບານເດຍລະດາດເຖິງຍອດແລ້ວ
ຢືນຢູ່ແຕ່ຜູ້ດຽວທີ່ເຫງົ້າຕົ້ນສາລະນັ້ນ
ອັນໜຶ່ງ ຜິວພັນຂອງທ່ານບໍ່ເປັນສອງຮອງໃຜ
ທ່ານບໍ່ຢ້ານຄວາມສາມຫາວຂອງພວກນັກເລງເຈົ້າຊູ້ບໍ

ລຳດັບນັ້ນ ອຸບົນວັນນາພິກຂຸນີໄດ້ມີຄວາມຄິດດັ່ງນີ້ວ່າ ນີ້ໃຜນໍ? ມາກ່າວຄາຖາ ຈະເປັນມະນຸດຫຼືອະມະນຸດກັນແນ່ ທັນໃດນັ້ນ ອຸບົນວັນນາພິກຂຸນີໄດ້ມີຄວາມຄິດດັ່ງນີ້ອີກວ່າ ນີ້ຄືມານຜູ້ມີບາບ ປະສົງຈະໃຫ້ເຮົາເກີດຄວາມຢ້ານ ຯລຯ ຈຶ່ງກ່າວຄາຖາວ່າ

ແມ່ນນັກເລງເປັນແສນມາໃນບ່ອນນີ້ ເຮົາກໍບໍ່ສະດຸ້ງ
ແມ່ນພຽງຂົນຂອງເຮົາກໍບໍ່ຫວັ່ນໄຫວ ບໍ່ສັ່ນສະເທືອນ
ມານ ເຮົາແມ່ນຜູ້ດຽວກໍບໍ່ຢ້ານທ່ານ

ເຮົານີ້ຈະຫາຍໂຕໄປຫຼືມຸດເຂົ້າທ້ອງທ່ານ
ແມ່ນຈະຢືນຢູ່ລະຫວ່າງດວງຕາ ທ່ານກໍບໍ່ເຫັນເຮົາ
ເຮົາເປັນຜູ້ຊ່ຽວຊານໃນຈິດ ຈະເລີນອິດທິບາດດີແລ້ວ
ພົ້ນຈາກເຄື່ອງມັດທຸກຊະນິດ
ເຮົາບໍ່ຢ້ານທ່ານດອກ ທ່ານຜູ້ມີອາຍຸເອີຍ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ອຸບົນວັນນາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ອຸບປະລະວັນນາສູດທີ ໕ ຈົບ**

# ໖. ຈາລາສູດ

## ວ່າດ້ວຍຈາລາພິກຂຸນີ

[໑໖໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເມື່ອເວລາເຊົ້າ ຈາລາພິກຂຸນີຄອງອັນຕະຣະວາສົກ ຯລຯ ຈຶ່ງນັ່ງພັກກາງເວັນທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ລຳດັບນັ້ນ ມານຜູ້ມີບາບເຂົ້າໄປຫາຈາລາພິກຂຸນີຮອດບ່ອນຢູ່ ໄດ້ຖາມຈາລາພິກຂຸນີດັ່ງນີ້ວ່າ

ພິກຂຸນີ ທ່ານບໍ່ພໍໃຈອັນໃດ?
ຈາລາພິກຂຸນີຕອບວ່າ ທ່ານຜູ້ມີອາຍຸ ເຮົາບໍ່ມັກຄວາມເກີດເລີຍ

ມານຜູ້ມີບາບກ່າວດ້ວຍຄາຖາ ວ່າ

ຍ້ອນເຫດໃດ ທ່ານຈຶ່ງບໍ່ມັກຄວາມເກີດ
ຜູ້ເກີດມາແລ້ວຍ່ອມເສບກາມໄດ້ ໃຜບອກທ່ານຢຶດຖືເລື້ອງນີ້
ເຊີາສາພິກຂຸນີ ທ່ານຈົ່ງມັກຄວາມເກີດເທີ້ນ

ຈາລາພິກຂຸນີກ່າວດ້ວຍຄາຖາ ວ່າ

ຄວາມຕາຍຍ່ອມມີແກ່ຜູ້ທີ່ເກີດມາແລ້ວ
ຜູ້ທີ່ເກີດມາແລ້ວຍ່ອມປະສົບທຸກ
ຄື ການຄຸມຂັງ ການຂ້າ ຄວາມເສົ້າໝອງ
ຍ້ອນແນວນັ້ນ ເຮົາຈຶ່ງບໍ່ມັກຄວາມເກີດ

พระพุดทะเจ้าຊົງສະແດງທຳເຫດກ້າວລ່ວງຄວາມເກີດໄວ້ແລ້ວ
ຊົງໃຫ້ເຮົາຕັ້ງຢູ່ໃນສັດຈະເພື່ອລະທຸກທັງປວງ
ສັດເຫຼົ່າໃດ ເຂົ້າເຖິງຮູບພົບແລະດຳລົງຢູ່ໃນອະຮູບພົບ
ສັດເຫຼົ່ານັ້ນ ເມື່ອຍັງບໍ່ຮູ້ຄວາມດັບຈຶ່ງຕ້ອງມາສູ່ພົບອີກ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ຈາລາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ຈາລາສູດທີ ໖ ຈົບ**

# ໗. ອຸປະຈາລາສູດ

## ວ່າດ້ວຍອຸປະຈາລາພິກຂຸນີ

[໑໖໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເມື່ອເວລາເຊົ້າ ອຸປະຈາລາພິກຂຸນີຄອງອັນຕະຣະວາສົກ ຯລຯ ຈຶ່ງນັ່ງພັກກາງເວັນທີ່ເຫງົ້າ ຕົ້ນໄມ້ແຫ່ງໜຶ່ງ ລຳດັບນັ້ນ ມານຜູ້ມີບາບ ຯລຯ ໄດ້ຖາມອຸປະຈາລາພິກຂຸນີດັ່ງນີ້ວ່າ ພິກຂຸນີ ເປັນຫຍັງ? ທ່ານຈຶ່ງບໍ່ຍາກເກີດ

ອຸປະຈາລາພິກຂຸນີຕອບວ່າ ທ່ານຜູ້ມີອາຍຸ ເຮົາບໍ່ຍາກເກີດບໍ່ວ່າຖານະໃດ

ມານຜູ້ມີບາບ ກ່າວດ້ວຍຄາຖາ ວ່າ

ທ່ານຈົ່ງຕັ້ງຈິດໄວ້ໃນພວກເທບຊັ້ນຕາວະຕິງສາ
ຊັ້ນຍາມາ ຊັ້ນດຸສິດ ຊັ້ນນິມມານະຣະດີ
ແລະຊັ້ນປະຣະນິມມິຕະວະສະວັດດີເທີ້ນ
ທ່ານຈັກໄດ້ສະເຫວີຍຄວາມຍິນດີ

ອຸປະຈາລາພິກຂຸນີ ກ່າວດ້ວຍຄາຖາວ່າ

ພວກເທບຊັ້ນຕາວະຕິງສາ ຊັ້ນຍາມາ
ຊັ້ນດຸສິດ ຊັ້ນນິມມານະຣະດີ ແລະ ຊັ້ນປະຣະນິມມິຕະວະສະວັດດີ
ຍັງມັດພັນດ້ວຍເຄື່ອງມັດຄືກາມ
ຈະຕ້ອງກັບມາສູ່ອຳນາດມານອີກ
ໂລກທັງໝົດຮ້ອນຮົນ ໂລກທັງໝົດປັ່ນປ່ວນ

ໂລກທັງໝົດລຸກເປັນແປວ ໂລກທັງໝົດສັ່ນສະເທືອນ
ໃຈຂອງເຮົາຍິນດີແນ່ວແນ່ໃນນິບພານ ເຊິ່ງບໍ່ສັ່ນສະເທືອນ
ບໍ່ຫວັ່ນໄຫວ ທີ່ປຸຖຸຊົນເສບບໍ່ໄດ້ ແລະບໍ່ແມ່ນຄະຕິຂອງມານ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ອຸປະຈາລາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ອຸປະຈາລາສູດທີ ໗ ຈົບ**

# ໘. ສີສຸປະຈາລາສູດ

## ວ່າດ້ວຍສີສຸປະຈາລາພິກຂຸນີ

[໑໖໙] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ສີສຸປະຈາລາພິກຂຸນີຄອງອັນຕະຣະວາສົກ ຯລຯ ຈຶ່ງນັ່ງພັກກາງເວັນທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ລຳດັບນັ້ນ ມານຜູ້ມີບາບເຂົ້າໄປຫາສີສຸປະຈາລາພິກຂຸນີເຖິງບ່ອນນັ່ງພັກ ໄດ້ຖາມສີສຸປະຈາລາພິກຂຸນີດັ່ງນີ້ວ່າ ພິກຂຸນີ ທ່ານຖືກໃຈລັດທິຂອງໃຜ?

ສີສຸປະຈາລາພິກຂຸນີຕອບວ່າ ທ່ານຜູ້ມີອາຍຸ ເຮົາບໍ່ພໍໃຈລັດທິຂອງໃຜເລີຍ

ມານຜູ້ມີບາບກ່າວດ້ວຍຄາຖາ ວ່າ

ທ່ານເປັນຄົນຫົວໂລ້ນ ເຈາະຈົງຜູ້ໃດ
ຈຶ່ງຜາກົດໂຕຄືສະມະນະ
ແຕ່ເປັນຫຍັງ? ທ່ານຈຶ່ງບໍ່ພໍໃຈລັດທິ
ທ່ານປະພຶດເລື້ອງນີ້ ຍ້ອນຄວາມງົມງວາຍແມ່ນບໍ?

ສີສຸປະຈາລາພິກຂຸນີກ່າວດ້ວຍຄາຖາ ວ່າ

ເຈົ້າລັດທິນອກພຣະສາດສະໜານີ້
ຍ່ອມຈົມຢູ່ໃນທິດຖິທັງຫຼາຍ
ເຮົາບໍ່ພໍໃຈທຳຂອງພວກເຂົາ
ພວກເຂົາເປັນຄົນບໍ່ສະຫຼາດໃນທຳ

ແຕ່ພຣະພຸດທະເຈົ້າຜູ້ສະເດັດອຸບັດໃນສາກະຍະຕະກູນ

ບໍ່ມີບຸກຄົນອື່ນປຽບ ຊຶ່ງຄອບງຳສິ່ງທັງປວງ
ບັນເທົາເຊິ່ງມານໄດ້ ບໍ່ປຣາໄຊໃນທີ່ທຸກສະຖານ
ພົ້ນແລ້ວຈາກກິເລດທັງປວງ ບໍ່ມີຕັນຫາແລະທິດຖິອາໄສ
ມີພຣະຈັກຂຸ ຊຶ່ງເຫັນທຳທັງປວງ
ບັນລຸທຳເປັນທີ່ສິ້ນກຳທຸກຢ່າງ
ລຸດພົ້ນຍ້ອນທຳເປັນທີ່ສິ້ນອຸປະທິແລ້ວ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນສາດສະດາຂອງເຮົາ
ເຮົາພໍໃຈຄຳສອນຂອງພຣະອົງ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ສີສຸປະຈາລາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ສີສຸປະຈາລາສູດທີ ໘ ຈົບ**

## ໙. ເສລາສູດ

## ວ່າດ້ວຍເສລາພິກຂຸນີ

[໑໗໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເມື່ອເວລາເຊົ້າ ເສລາພິກຂຸນີຄອງອັນຕະຣະວາສົກ ຯລຯ ຈຶ່ງນັ່ງພັກກາງເວັນທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ລຳດັບນັ້ນ ມານຜູ້ມີບາບປະສົງຈະໃຫ້ເສລາພິກຂຸນີເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ຯລຯ ໄດ້ກ່າວກັບເສລາພິກຂຸນີດ້ວຍ ຄາຖາວ່າ

ໃຜສ້າງຮ່າງກາຍນີ້? ຜູ້ສ້າງຮ່າງກາຍຢູ່ບ່ອນໃດ?
ຮ່າງກາຍເກີດຂຶ້ນຢູ່ໃສ? ຮ່າງກາຍດັບຢູ່ໃສ?

ລຳດັບນັ້ນ ເສລາພິກຂຸນີໄດ້ມີຄວາມຄິດດັ່ງນີ້ວ່າ ນີ້ໃຜນໍມາກ່າວຄາຖາ ຈະເປັນມະນຸດຫຼືອະມະນຸດກັນແນ່ ທັນໃດນັ້ນ ເສລາພິກຂຸນີໄດ້ມີຄວາມຄິດດັ່ງນີ້ອີກວ່າ ນີ້ຄື ມານຜູ້ມີບາບປະສົງຈະໃຫ້ເຮົາເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງກ່າວຄາຖາວ່າ

ຮ່າງກາຍນີ້ຕົນເອງກໍບໍ່ໄດ້ສ້າງ ຜູ້ອື່ນກໍບໍ່ໄດ້ສ້າງ
ອາໄສເຫດຈຶ່ງເກີດ ຍ້ອນເຫດດັບຈຶ່ງດັບ

ພືດຊະນິດໃດຊະນິດໜຶ່ງທີ່ບຸກຄົນຫວ່ານລົງໃສ່ນາ
ອາໄສເຫດ ໒ ປະການ ຄືຣົດດິນແລະຢາງພືດ
ຈຶ່ງງອກຂຶ້ນ ສັນໃດ

ຂັນ ທາດ ແລະ ອາຍະຕະນະ ໖ ເຫຼົ່ານີ້
ກໍຄືກັນສັນນັ້ນ ອາໄສເຫດຈຶ່ງເກີດ ຍ້ອນເຫດດັບຈຶ່ງດັບ

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ເສລາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ເສລາສູດທີ ໙ ຈົບ**

# ໑໐. ວະຊິຣາສູດ

## ວ່າດ້ວຍວະຊິຣາພິກຂຸນີ

[໑໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ເມື່ອເວລາເຊົ້າ ວະຊິຣາພິກຂຸນີຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສຳເລັດແລ້ວ ເຂົ້າໄປສູ່ປ່າອັນທະວັນເພື່ອພັກກາງເວັນ ເຖິງປ່າອັນທະວັນແລ້ວ ຈຶ່ງນັ່ງພັກກາງເວັນທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ

ລຳດັບນັ້ນ ມານຜູ້ມີບາບປະສົງຈະໃຫ້ວະຊິຣາພິກຂຸນີເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງເຂົ້າໄປຫາ ວະຊິຣາພິກຂຸນີເຖິງບ່ອນນັ່ງພັກແລ້ວໄດ້ກ່າວກັບວະຊິຣາພິກຂຸນີດ້ວຍຄາຖາ ວ່າ

ໃຜສ້າງສັດນີ້? ຜູ້ສ້າງສັດຢູ່ບ່ອນໃດ?
ສັດເກີດຂຶ້ນຢູ່ໃສ? ສັດດັບຢູ່ໃສ?

ລຳດັບນັ້ນ ວະຊິຣາພິກຂຸນີໄດ້ມີຄວາມຄິດດັ່ງນີ້ວ່າ ນີ້ໃຜນໍ? ມາກ່າວຄາຖາ ຈະເປັນມະນຸດຫຼືອະມະນຸດກັນແນ່ ທັນໃດນັ້ນ ວະຊິຣາພິກຂຸນີໄດ້ມີຄວາມຄິດດັ່ງນີ້ອີກວ່າ ນີ້ຄືມານຜູ້ມີບາບປະສົງຈະໃຫ້ເຮົາເກີດຄວາມຢ້ານ ຄວາມຕື່ນຕົກໃຈ ຄວາມຂົນຫົວລຸກ ແລະປະສົງຈະໃຫ້ເຄື່ອນຈາກສະມາທິ ຈຶ່ງກ່າວຄາຖາ ວ່າ

ມານເອີຍ ຄວາມເຫັນຂອງເຈົ້າເຊື່ອວ່າມີສັດ
ກອງແຫ່ງສັງຂານລ້ວນ ໆ ນີ້
ບັນດິດຈະຮຽກວ່າສັດບໍ່ໄດ້ເລີຍ

ເມື່ອຂັນທັງຫຼາຍມີຢູ່ ການສົມມຸດວ່າສັດກໍມີໄດ້
ຄືຄຳວ່າລົດມີໄດ້ຍ້ອນປະກອບສ່ວນຕ່າງ ໆ ເຂົ້າໃສ່ກັນ

ອັນໜຶ່ງ ທຸກທໍ່ນັ້ນເກີດຂຶ້ນ
ທຸກທໍ່ນັ້ນດຳລົງຢູ່ແລະຜັນແປໄປ
ນອກຈາກທຸກ ບໍ່ມີສິ່ງອື່ນເກີດຂຶ້ນ
ນອກຈາກທຸກ ບໍ່ມີອັນໃດອື່ນດັບໄປ[໑]

ລຳດັບນັ້ນ ມານຜູ້ມີບາບເປັນທຸກເສຍໃຈວ່າ ວະຊິຣາພິກຂຸນີຮູ້ຈັກເຮົາ ຈຶ່ງຫາຍໂຕໄປໃນບ່ອນນັ້ນເອງ

**ວະຊິຣາສູດທີ ໑໐ ຈົບ**

**ພິກຂຸນີສັງຍຸດ ຈົບບໍລິບູນ**

## ລວມພຣະສູດທີ່ ມີໃນສັງຍຸດນີ້ ຄື

| | |
|---|---|
| ໑. ອາລະວິກາສູດ | ໒. ໂສມາສູດ |
| ໓. ກີສາໂຄຕະມີສູດ | ໔. ວິຊະຍາສູດ |
| ໕. ອຸບປະລະວັນນາສູດ | ໖. ຈາລາສູດ |
| ໗. ອຸປະຈາລາສູດ | ໘. ສີສຸປະຈາລາສູດ |
| ໙. ເສລາສູດ | ໑໐. ວະຊິຣາສູດ |

# ໖. ພົມສັງຍຸດ

# ໑. ປະຖົມວັກ

### ໝວດທີ່ ໑

## ໑. ພົມມາຍາຈະນະສູດ

### ວ່າດ້ວຍທ້າວມະຫາພົມອາຣາດທະນາພຣະພຸດທະເຈົ້າສະແດງທຳ

[໑໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທຳອິດຕັດສະຣູ້ປະທັບຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຮ່ຳເພິງແນວນີ້ວ່າ ທຳ⁹ທີ່ເຮົາໄດ້ບັນລຸແລ້ວນີ້ ເລິກເຊິ່ງ ເຫັນໄດ້ຍາກຮູ້ຕາມໄດ້ຍາກ ສະງົບ ປະນີດ ບໍ່ເປັນວິໄສແຫ່ງຕັກກະ (ການຄິດເອົາ) ລະອຽດ ບັນດິດຈຶ່ງຈະຮູ້ໄດ້ ສຳລັບໝູ່ປະຊາຜູ້ ອອນຊອນດ້ວຍອາໄລ໌ ຍິນດີໃນອາໄລ ເພີດເພີນໃນອາໄລ ຖານະນີ້ຍ່ອມເປັນສິ່ງທີ່ເຫັນໄດ້ຍາກ ກ່າວຄືຫຼັກອິທັບປັດຈະຍະຕາ ຫຼັກປະຕິດຈະສະມຸບບາດ ເຖິງແມ່ນຖານະນີ້ກໍເປັນສິ່ງທີ່ເຫັນໄດ້ຍາກຫຼາຍ ກ່າວຄືຄວາມສະງົບແຫ່ງສັງຂານທັງປວງ ຄວາມກຳຈັດອຸປະທິທັງປວງ ຄວາມສິ້ນຕັນຫາ ວິຣາຄະ ນິໂຣທະ ນິບພານ ກໍຖ້າເຮົາຈະເພິ່ງສະແດງທຳແລະຜູ້ອື່ນຈະບໍ່ເຂົ້າໃຈຊຶ້ງຕໍ່ເຮົາ ຂໍ້ນັ້ນກໍຈະເພິ່ງເປັນຄວາມເມື່ອຍລ່າແກ່ເຮົາ ຈະເພິ່ງເປັນຄວາມລຳບາກເປົ່າແກ່ເຮົາ

ອັນໜຶ່ງນໍ ອະນັດສະຣິຍະຄາຖາເຫຼົ່ານີ້ ທີ່ບໍ່ເຄີຍຊົງສະດັບມາກ່ອນ ໄດ້ຜາກົດແຈ້ງຊັດແກ່ພຣະຜູ້ມີພຣະພາກເຈົ້າ ວ່າ

  ບັດນີ້ ເຮົາຍັງບໍ່ຄວນປະກາດທຳ  
ທີ່ເຮົາໄດ້ບັນລຸດ້ວຍຄວາມລຳບາກ  
ຍ້ອນທຳນີ້ ບໍ່ແມ່ນສິ່ງທີ່ຜູ້ຖືກຣາຄະ  
ແລະໂທສະຄອບງຳ ຈະຮູ້ໄດ້ງ່າຍ

  ແຕ່ເປັນສິ່ງພາທວນກະແສ⁹ ລະອຽດ  
ເລິກເຊິ່ງ ຮູ້ເຫັນໄດ້ຍາກ ປະນີດ ຜູ້ກຳໜັດດ້ວຍຣາຄະ  
ຖືກກອງໂມຫະຫຸ້ມຫໍ່ໄວ້ ຈັກຮູ້ເຫັນບໍ່ໄດ້

ເມື່ອພຣະຜູ້ມີພຣະພາກເຈົ້າຊົງພິຈາລະນາເຫັນດັ່ງນີ້ ພຣະຫະໄທກໍນ້ອມໄປເພື່ອການຂວນຂວາຍນ້ອຍ ບໍ່ໄດ້ນ້ອມໄປເພື່ອສະແດງທຳ

ຄັ້ງນັ້ນ ທ້າວສະຫຳບໍດີພົມ ຮູ້ຄວາມຮ່ຳເພິງຂອງພຣະຜູ້ມີພຣະພາກເຈົ້າດ້ວຍໃຈແລ້ວ ໄດ້ມີຄວາມຄິດດັ່ງນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ໂລກຈະສູນຫາຍແລ້ວນໍ ໂລກຈະພິນາດແລ້ວນໍ ຍ້ອນພຣະຕະຖາຄົດອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງນ້ອມພຣະຫະໄທໄປເພື່ອການຂວນຂວາຍໜ້ອຍ ບໍ່ໄດ້ນ້ອມພຣະຫະໄທໄປເພື່ອສະແດງທຳ ຈຶ່ງຫາຍໂຕຈາກພົມມະໂລກ ມາຜາກົດຢູ່ເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າ ຄື ບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ແລ້ວຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ຄຸກເຂົ່າເບື້ອງຂວາລົງເທິງແຜ່ນດິນ ປະນົມມື ໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດສະແດງທຳ ຂໍພຣະສຸດຄົດເຈົ້າໄດ້ໂຜດສະແດງທຳ ຍ້ອນສັດທັງຫຼາຍຜູ້ມີກິເລດຄືທຸລີໃນຕາໜ້ອຍມີຢູ່ ສັດເຫຼົ່ານັ້ນ ຍ່ອມເສື່ອມ ຍ້ອນບໍ່ໄດ້ສະດັບທຳ ຍ້ອນຈັກມີຜູ້ຮູ້ທຳ

ທ້າວສະຫຳບໍດີພົມຂາບທູນດັ່ງນີ້ແລ້ວ ໄດ້ກ່າວຄາຖາອື່ນອີກ ວ່າ

ໃນການກ່ອນທຳທີ່ບໍ່ບໍລິສຸດ
ອັນຄົນຜູ້ມີມົນທິນຄິດຄົ້ນໄວ້ ຜາກົດໃນແຄ້ວມະຄົດ
ພຣະອົງໂຜດຊົງໄຂປະຕູອະມະຕະນັ້ນເທີ້ນ
ຂໍເຫຼົ່າສັດ ຈົ່ງຟັງທຳທີ່ພຣະສຳພຸດທະເຈົ້າຜູ້ປາສະຈາກມົນທິນ
ໄດ້ຕັດສະຮູ້ແລ້ວຕາມລຳດັບ

ຂ້າແດ່ ພຣະອົງຜູ້ມີປັນຍາດີ ມີພຣະສະມັນຕະຈັກຂຸ
ບຸຣຸດຜູ້ຢືນຢູ່ເທິງຍອດເຂົາສີລາລ້ວນ
ເພິ່ງເຫັນໝູ່ຊົນໄດ້ໂດຍຮອບ ສັນໃດ
ພຣະອົງຜູ້ໝົດຄວາມໂສກເສົ້າແລ້ວ ກໍສັນນັ້ນ

ຂໍຈົ່ງສະເດັດຂຶ້ນສູ່ຜາສາດຄືທຳແລ້ວ
ຈັກໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມໂສກເສົ້າ
ແລະຖືກຊາດ ຊະຣາຄອບງຳໄດ້ຊັດເຈນ

ຂ້າແດ່ ພຣະອົງຜູ້ແກ່ກ້າ ຜູ້ຊະນະສົງຄາມ
ຜູ້ນຳໝູ່ ຜູ້ບໍ່ມີໜີ້ ຂໍພຣະອົງໂຜດລຸກຂຶ້ນສະເດັດຈາຣິກໄປໃນໂລກ
ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຈົ່ງຊົງສະແດງທຳ
ຍ້ອນວ່າຈັກມີຜູ້ຮູ້ທຳ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄຳທູນອາຣາດທະນາຂອງພົມ ແລະຍ້ອນຄວາມມີພຣະມະຫາກະລຸນາໃນໝູ່ສັດ ຊົງກວດເບິ່ງໂລກດ້ວຍພຸດທະຈັກຂຸ[๑] ເມື່ອພຣະຜູ້ມີພຣະພາກເຈົ້າຊົງກວດເບິ່ງໂລກດ້ວຍພຸດທະຈັກຂຸ ໄດ້ຊົງເຫັນສັດທັງຫຼາຍຜູ້ມີກິເລດຄືທຸລີໃນຕາໜ້ອຍ ມີກິເລດຄືທຸລີໃນຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ລາງພວກມັກເຫັນປະຣະໂລກແລະໂທດວ່າ ເປັນຕາຢ້ານກໍມີ ລາງພວກມັກບໍ່ເຫັນປະຣະໂລກແລະໂທດວ່າ ເປັນຕາຢ້ານກໍມີ

ມີອຸປະມາ ຄື ໃນກໍອຸບົນ ໃນກໍປະທຸມ ໃນກໍປຸນທະຣິກ ດອກບົວ ດອກບົວຫຼວງ ດອກປຸນທະຣິກ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຍັງບໍ່ພົ້ນນ້ຳ ຈົມຢູ່ໃນນ້ຳ ມີນ້ຳລ້ຽງຢູ່ ດອກບົວ ດອກບົວຫຼວງ ດອກປຸນທະຣິກ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຢູ່ສະເໝີນ້ຳ ດອກບົວ ດອກບົວຫຼວງ ດອກປຸນທະຣິກ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຂຶ້ນພົ້ນນ້ຳ ບໍ່ແຕະນ້ຳ ສັນໃດ

ພຣະຜູ້ມີພຣະພາກເຈົ້າ ຊົງກວດເບິ່ງໂລກດ້ວຍພຸດທະຈັກຂຸ ໄດ້ເຫັນສັດທັງຫຼາຍຜູ້ມີກິເລດຄື ທຸລີໃນຕາໜ້ອຍ ມີກິເລດຄືທຸລີໃນຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ລາງພວກມັກເຫັນປະຣະໂລກແລະໂທດວ່າ ເປັນສິ່ງທີ່ເປັນຕາຢ້ານກໍມີ ລາງພວກມັກບໍ່ເຫັນປະຣະໂລກແລະໂທດວ່າ ເປັນສິ່ງທີ່ເປັນຕາຢ້ານກໍມີ ສັນນັ້ນ

ເມື່ອຊົງເຫັນແລ້ວ ໄດ້ຕັດຕອບທ້າວສະຫຳບໍດີພົມດ້ວຍພຣະຄາຖາ ວ່າ

ສັດທັງຫຼາຍເຫຼົ່າໃດຈະຟັງ ຈົ່ງປ່ອຍສັດທາມາເທີ້ນ
ເຮົາໄດ້ໄຂປະຕູອະມະຕະແກ່ສັດທັງຫຼາຍເຫຼົ່ານັ້ນແລ້ວ
ທ່ານພົມ ຍ້ອນເຮົາສຳຄັນວ່າຈະລຳບາກ
ຈຶ່ງບໍ່ໄດ້ສະແດງທຳທີ່ປະນີດເລີກຊຶ້ງ ໃນໝູ່ມະນຸດ

ລຳດັບນັ້ນ ທ້າວສະຫຳບໍດີພົມຄິດວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຊົງປະທານໂອກາດແກ່ເຮົາ ເພື່ອຈະຊົງສະແດງທຳແລ້ວ ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນແລ[๑]

**ພົມມາຍາຈະນະສູດທີ ໑ ຈົບ**

# ໘. ຄາຣະວະສູດ

## ວ່າດ້ວຍພຣະພຸດທະເຈົ້າຊົງສັກກາຣະເຄົາລົບທຳ

[໑໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ທຳອິດຕັດສະຣູ້ປະທັບຢູ່ທີ່ໃຕ້ຕົ້ນອະຊະປາລະນິໂຄດ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຫຼີກຫຼີກຢູ່ໃນບ່ອນສະງັດ ເກີດຄວາມຮຳເພິງແນວນີ້ວ່າ ບຸກຄົນຜູ້ບໍ່ເຄົາລົບ ບໍ່ຢຳເກງ ຍ່ອມຢູ່ເປັນທຸກ ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະຫຼືພາມຄົນໃດນໍຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ມີພຣະດຳຣິດັ່ງນີ້ວ່າ ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະຫຼືພາມອື່ນຢູ່ ເພື່ອຄວາມບໍລິບູນແຫ່ງສິນຂັນທີ່ຍັງບໍ່ບໍລິບູນ ແຕ່ເຮົາບໍ່ເຫັນສະມະນະຫຼືພາມອື່ນໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດທີ່ມີສິນສົມບູນກວ່າເຮົາ ທີ່ເຮົາຈະເພິ່ງສັກກາຣະ ເຄົາລົບອາໄສຢູ່

ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະຫຼືພາມອື່ນຢູ່ ເພື່ອຄວາມບໍລິບູນແຫ່ງສະມາທິຂັນທີ່ຍັງບໍ່ບໍລິບູນ ແຕ່ເຮົາບໍ່ເຫັນສະມະນະຫຼືພາມອື່ນໃນໂລກ ພ້ອມທັງ ເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ທີ່ມີສະມາທິສົມບູນກວ່າເຮົາ ທີ່ເຮົາເພິ່ງສັກກາຣະ ເຄົາລົບ ອາໄສຢູ່

ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະຫຼືພາມອື່ນຢູ່ ເພື່ອຄວາມບໍລິບູນແຫ່ງປັນຍາຂັນທີ່ຍັງບໍ່ບໍລິບູນ ແຕ່ເຮົາບໍ່ເຫັນສະມະນະຫຼືພາມອື່ນໃນໂລກ ພ້ອມທັງ ເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ທີ່ມີປັນຍາສົມບູນກວ່າເຮົາ ທີ່ເຮົາເພິ່ງສັກກາຣະ ເຄົາລົບ ອາໄສຢູ່

ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະຫຼືພາມອື່ນຢູ່ ເພື່ອຄວາມບໍລິບູນແຫ່ງວິມຸດຕິຂັນທີ່ຍັງບໍ່ບໍລິບູນ ແຕ່ເຮົາບໍ່ເຫັນສະມະນະຫຼືພາມອື່ນໃນໂລກ ພ້ອມທັງເທວະໂລກ ຯລຯ ທີ່ມີວິມຸດຕິສົມບູນກວ່າເຮົາ ທີ່ເຮົາເພິ່ງສັກກາຣະ ເຄົາລົບ ອາໄສຢູ່

ເຮົາເພິ່ງສັກກາຣະ ເຄົາລົບ ອາໄສສະມະນະຫຼືພາມອື່ນຢູ່ ເພື່ອຄວາມບໍລິບູນ ແຫ່ງວິມຸດຕິຍານທັດສະນະຂັນທີ່ຍັງບໍ່ບໍລິບູນ ແຕ່ເຮົາບໍ່ເຫັນສະມະນະຫຼືພາມອື່ນ ໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດທີ່ມີວິມຸດ

ຕິຍານທັດສະນະສົມບູນກວ່າເຮົາ ທີ່ເຮົາເພິ່ງສັກກາຣະ ເຄົາລົບ ອາໄສຢູ່ ທາງທີ່ດີເຮົາເພິ່ງສັກກາຣະ ເຄົາລົບທຳທີ່ເຮົາຕັດສະຣູ້ແລ້ວນັ້ນຢູ່

ຄັ້ງນັ້ນ ທ້າວສະຫຳບໍດີພົມ ຮູ້ຄວາມຮ່ຳເພິງຂອງພຣະຜູ້ມີພຣະພາກເຈົ້າດ້ວຍໃຈແລ້ວ ຫາຍໂຕຈາກພົມມະໂລກມາຜາກົດ ເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ຄັ້ງນັ້ນແລ ທ້າວສະຫຳບໍດີພົມຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂໍ້ນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດ ຂໍ້ນີ້ເປັນແນວນັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າໃນອະດີດ ຊົງສັກກາຣະ ເຄົາລົບ ອາໄສທຳຢູ່ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າໃນອະນາຄົດຊົງສັກກາຣະ ເຄົາລົບອາໄສທຳຢູ່ ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າໃນປັດຈຸບັນ ກໍຂໍຈົ່ງສັກກາຣະ ເຄົາລົບ ອາໄສທຳຢູ່ເທີ້ນ

ທ້າວສະຫຳບໍດີພົມຂາບທູນດັ່ງນີ້ແລ້ວ ຈຶ່ງໄດ້ກ່າວຄາຖາອື່ນຕໍ່ໄປອີກ ວ່າ

ພຣະສຳພຸດທະເຈົ້າໃນອະດີດ
ພຣະສຳພຸດທະເຈົ້າໃນອະນາຄົດ
ແລະ ພຣະສຳພຸດທະເຈົ້າພຣະອົງໃດໃນປັດຈຸບັນ
ຜູ້ກຳຈັດຄວາມໂສກເສົ້າຂອງສັດເປັນຈຳນວນຫຼາຍໃຫ້ພິນາດໄປ

ທຸກ ໆ ພຣະອົງນັ້ນ ລ້ວນເຄົາລົບພຣະສັດທຳຢູ່
ນີ້ເປັນທຳມະດາຂອງພຣະພຸດທະເຈົ້າທັງຫຼາຍ
ຍ້ອນເຫດນັ້ນແລ ກຸນລະບຸດຜູ້ໃຝ່ປະໂຫຍດ
ມຸ້ງຫວັງຄວາມເປັນໃຫຍ່ ຣະນຶກເຖິງຄຳສອນ
ຂອງພຣະພຸດທະເຈົ້າທັງຫຼາຍ ເພິ່ງເຄົາລົບພຣະສັດທຳຢູ່ເທີ້ນ

**ຄາຣະວະສູດທີ ໘ ຈົບ**

# ៦. ພິມເທວະສູດ

## ວ່າດ້ວຍພຣະພິມເທບ

[໑໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ບຸດຂອງນາງພາມມະນີຄົນໜຶ່ງ ຊື່ພິມເທບ ອອກບວດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ທ່ານພຣະພິມເທບຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ[໑] ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ[໒] ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ກໍແລ ທ່ານພຣະພິມເທບເປັນພຣະອະຣະຫັນຮູບໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

ເມື່ອເວລາເຊົ້າ ທ່ານພຣະພິມເທບຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງສາວັດຖີ ທ່ຽວບິນທະບາດໃນນະຄອນສາວັດຖີຕາມລຳດັບຮ່ອມ ແລ້ວເຂົ້າໄປສູ່ທີ່ຢູ່ແຫ່ງມານດາຂອງຕົນ ສະໄໝນັ້ນ ນາງພາມມະນີມານດາຂອງທ່ານພຣະພິມເທບ ຖືການບູຊາດ້ວຍກ້ອນເຂົ້າແກ່ພົມເປັນປະຈຳ ຄັ້ງນັ້ນ ທ້າວສະຫຳບໍດີພົມດຳຣິວ່າ ນາງພາມມະນີຜູ້ມານດາຂອງທ່ານພຣະພິມເທບນີ້ ຖືການບູຊາດ້ວຍກ້ອນເຂົ້າແກ່ພົມເປັນປະຈຳ ທາງທີ່ດີເຮົາເພິ່ງເຂົ້າໄປຫານາງແລ້ວເຮັດໃຫ້ສະຫຼົດໃຈ ລຳດັບນັ້ນ ທ້າວສະຫຳບໍດີພົມຢືນຢູ່ໃນອາກາດ ໄດ້ກ່າວກັບນາງພາມມະນີມານດາຂອງທ່ານພຣະພິມເທບດ້ວຍຄາຖາທັງຫຼາຍ ວ່າ

ນາງພາມມະນີ ທ່ານຖືການບູຊາ
ດ້ວຍກ້ອນເຂົ້າ ແກ່ພົມໃດເປັນປະຈຳ
ພົມມະໂລກຂອງພົມນັ້ນຢູ່ໄກຈາກບ່ອນນີ້
ນາງພາມມະນີ ອາຫານຂອງພົມບໍ່ແມ່ນແນວນີ້
ທ່ານບໍ່ຮູ້ຈັກທາງຂອງພົມ ແລ້ວເປັນຫຍັງ? ຈຶ່ງຈົ່ມເຖິງພົມຢູ່ແນວນີ້ນໍ?

ນາງພາມມະນີ ກໍທ່ານພຣະພິມເທບຂອງທ່ານນັ້ນ
ເປັນຜູ້ປາດສະຈາກອຸປະທິ[໑] ເຖິງຄວາມເປັນອະຕິເທບ
ບໍ່ມີກິເລດເຄື່ອງກັງວົນ ເຫັນໄພຢູ່ສະເໝີ ບໍ່ລ້ຽງເບິ່ງຜູ້ອື່ນ

ທ່ານພຣະພົມເທບຜູ້ເຂົ້າສູ່ເຮືອນຂອງທ່ານເພື່ອບິນທະບາດ
ເປັນຜູ້ສົມຄວນແກ່ກ້ອນເຂົ້າທີ່ບຸກຄົນເພິ່ງນຳມາບູຊາ
ຜູ້ເຖິງຝັ່ງແຫ່ງເວທະ ອົບຮົມຕົນແລ້ວ
ຄວນແກ່ທັກຂິນາຂອງມະນຸດແລະເທວະດາທັງຫຼາຍ
ລອຍບາບແລ້ວ ບໍ່ຖືກຕັນຫາແລະທິດຖິສາບທາ
ເປັນຄົນເຢືອກເຢັນ ກຳລັງທ່ຽວສະແຫວງຫາອາຫານຢູ່
ອະດີດແລະອະນາຄົດບໍ່ມີແກ່ທ່ານພຣະພົມເທບນັ້ນ

ທ່ານພຣະພົມເທບເປັນຜູ້ສະງົບລະງັບ ປາສະຈາກຄວັນ
ບໍ່ມີທຸກ ບໍ່ມີຄວາມຫວັງ ວາງອາດຍາແລ້ວ
ໃນປຸຖຸຊົນຜູ້ຍັງມີຄວາມຫວາດຫວັ່ນແລະໃນພຣະຂີນາສົບຜູ້ໝັ້ນຄົງ
ຂໍທ່ານພຣະພົມເທບນັ້ນຈົ່ງບໍຣິໂພກບິນທະບາດອັນເລີດ
ສຳລັບບູຊາພົມຂອງທ່ານ

ທ່ານພຣະພົມເທບເຊິ່ງເປັນຜູ້ປາສະຈາກເສນາມານ
ມີຈິດສະງົບລະງັບ ເຝິກຕົນແລ້ວ
ທ່ຽວໄປຄືຊ້າງປະເສີດ ບໍ່ຫວັ່ນໄຫວ
ເປັນພິກຂຸມີສີນດີ ມີຈິດພົ້ນວິເສດແລ້ວ
ຂໍທ່ານພຣະພົມເທບນັ້ນ ຈົ່ງບໍຣິໂພກບິນທະບາດອັນເລີດ
ສຳລັບບູຊາພົມຂອງທ່ານ

ທ່ານຈົ່ງເປັນຜູ້ເຫຼື້ອມໃສໃນທ່ານພຣະພົມເທບນັ້ນ
ເປັນຜູ້ບໍ່ຫວັ່ນໄຫວ ຕັ້ງທັກຂິນາໄວ້ໃນທ່ານຜູ້ເປັນທັກຂີໄນຍະບຸກຄົນ[១]
ນາງພາມມະນີ ທ່ານເຫັນມຸນີຜູ້ຂ້າມໂອຄະໄດ້ແລ້ວ
ຈົ່ງທຳບຸນອັນຈະນຳຄວາມສຸກມາໃຫ້ສືບ ໆ ໄປ

ທ່ານຈົ່ງເປັນຜູ້ເຫຼື້ອມໃສໃນທ່ານພຣະພົມເທບນັ້ນ
ເປັນຜູ້ບໍ່ຫວັ່ນໄຫວ ຕັ້ງທັກຂິນາໄວ້ໃນທ່ານຜູ້ເປັນທັກຂີໄນຍະບຸກຄົນ
ນາງພາມມະນີ ທ່ານເຫັນມຸນີຜູ້ຂ້າມໂອຄະໄດ້ແລ້ວ
ຈົ່ງທຳບຸນອັນຈະນຳຄວາມສຸກມາໃຫ້ສືບ ໆ ໄປເທີ້ນ

**ພົມເທວະສູດທີ ໓ ຈົບ**

# ໔. ພະກະສູດ

## ວ່າດ້ວຍພະກະພົມ

[໑໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພະກະພົມໄດ້ເກີດທິດຖິຊົ່ວແນວນີ້ວ່າ ຖານະແຫ່ງພົມນີ້ທ່ຽງແທ້ ໝັ້ນຍືນ ຕິດຕໍ່ກັນຢູ່ຄືເກົ່າ ມີຄວາມບໍ່ເຄື່ອນເປັນທຳມະດາ ບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດ ອັນໜຶ່ງ ເຄື່ອງສະບັດອອກ (ຈາກທຸກ) ອັນຍິ່ງແນວອື່ນນອກຈາກຖານະແຫ່ງພົມນີ້ບໍ່ມີອີກແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄວາມຄິດຄຳນຶງຂອງພະກະພົມດ້ວຍພຣະຫະໄທແລ້ວ ຊົງຫາຍພຣະອົງຈາກພຣະເຊຕະວັນແລ້ວໄປຜາກົດໃນພົມມະໂລກນັ້ນ ປຽບຄື ບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ ພະກະພົມໄດ້ເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາແຕ່ໄກ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ຂໍພຣະອົງຈົ່ງສະເດັດມາເທີ້ນ ຂໍຕ້ອນຮັບສະເດັດ ດົນ ໆ ພຣະອົງຈະມີເວລາສະເດັດມາໃນບ່ອນນີ້ ຂ້າແດ່ ພຣະອົງຜູ້ນິຣະທຸກ ກໍຖານະແຫ່ງພົມນີ້ທ່ຽງແທ້ ໝັ້ນຍືນ ຕິດຕໍ່ກັນ ຄືເກົ່າ ມີຄວາມບໍ່ເຄື່ອນເປັນທຳມະດາ ບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດ ອັນໜຶ່ງ ເຄື່ອງສະບັດອອກ (ຈາກທຸກ)ອັນຍິ່ງ ແນວອື່ນນອກຈາກຖານະແຫ່ງພົມນີ້ບໍ່ມີອີກແລ້ວ

ເມື່ອພະກະພົມກ່າວແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພະກະພົມດັ່ງນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ພະກະພົມເຖິງຄວາມໂງ່ຈ້າແລ້ວນໍ ພະກະພົມເຖິງຄວາມໂງ່ຈ້າແລ້ວນໍ ພະກະພົມກ່າວຖານະແຫ່ງພົມທີ່ເປັນຂອງບໍ່ທ່ຽງວ່າທ່ຽງ ກ່າວຖານະ ແຫ່ງພົມທີ່ບໍ່ໝັ້ນຍືນວ່າໝັ້ນຍືນ ກ່າວຖານະແຫ່ງພົມທີ່ບໍ່ຕິດຕໍ່ກັນວ່າຕິດຕໍ່ກັນ ກ່າວຖານະແຫ່ງພົມທີ່ບໍ່ຄືເກົ່າວ່າຄືເກົ່າ ກ່າວຖານະແຫ່ງພົມທີ່ມີຄວາມເຄື່ອນເປັນທຳມະດາວ່າ ມີຄວາມບໍ່ເຄື່ອນເປັນທຳມະດາ ແລະກ່າວຖານະແຫ່ງພົມອັນເປັນທີ່ເກີດ ແກ່ ຕາຍ ຈຸຕິ ແລະອຸບັດແຫ່ງຕົນວ່າ ຖານະແຫ່ງພົມນີ້ ບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດ ອັນໜຶ່ງ ຍ່ອມກ່າວເຄື່ອງສະບັດອອກ (ຈາກທຸກ) ອັນຍິ່ງແນວອື່ນເຊິ່ງມີຢູ່ວ່າບໍ່ມີອີກແລ້ວ

ພະກະພົມຂາບທູນວ່າ

ຂ້າແດ່ ພຣະໂຄດົມ ພວກຂ້າພຣະອົງ ໗໔ ອົງ
ບັງເກີດໃນພົມມະໂລກນີ້ ຍ້ອນບຸນກຳ

ມີອຳນາດໃຫ້ເປັນໄປ ລ່ວງຊາດແລະຊະຣາໄດ້ແລ້ວ
ການອຸບັດໃນພົມມະໂລກ ເຊິ່ງເຖິງຝັ່ງແຫ່ງເວທະນີ້ເປັນທີ່ສຸດແລ້ວ
ຊົນບໍ່ແມ່ນນ້ອຍຍ່ອມປາຖະໜາເປັນດັ່ງພວກຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພະກະພົມ ທ່ານສຳຄັນອາຍຸໃດວ່າຍາວ
ກໍອາຍຸນັ້ນສັ້ນ ບໍ່ຍາວເລີຍ
ພົມ ເຮົາຮູ້ອາຍຸ ໑໐໐,໐໐໐ ນິຣັບພຸທະ[๑] ຂອງທ່ານໄດ້ດີ

ພະກະພົມຂາບທູນ ວ່າ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ພຣະອົງຕັດວ່າ
ເຮົາເປັນຜູ້ມີປົກກະຕິເຫັນບໍ່ມີທີ່ສິ້ນສຸດ
ລ່ວງຊາດຊະຣາແລະຄວາມໂສກເສົ້າໄດ້ແລ້ວ
ອັນໃດ ເປັນສິນຂໍ້ວັດປະຕິບັດເກົ່າແກ່ຂອງຂ້າພຣະອົງນໍ?
ຂໍພຣະອົງຈົ່ງຕັດບອກສິນຂໍ້ວັດປະຕິບັດ
ເຊິ່ງຂ້າພຣະອົງຄວນຮູ້ແຈ້ງດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

໑. ຂໍ້ທີ່ທ່ານໃຫ້ມະນຸດເປັນຈຳນວນຫຼາຍ
ຜູ້ຢາກນໍ້າເຊິ່ງຖືກແດດແຜດເຜົາໃນລະດູຮ້ອນໄດ້ດື່ມນໍ້າ
ນັ້ນເປັນສິນຂໍ້ວັດປະຕິບັດເກົ່າແກ່ຂອງທ່ານ
ເຮົາຍັງຣະນຶກໄດ້ຢູ່ ເໝືອນຫຼັບແລ້ວຕື່ນຂຶ້ນ ສັນນັ້ນ

໔. ຂໍ້ທີ່ທ່ານຊ່ອຍປົດເປື້ອງປະຊຸມຊົນ
ເຊິ່ງຖືກໂຈນຈັບທີ່ຕະກູນເອນີ[๔]
ນັ້ນເປັນສິນຂໍ້ວັດປະຕິບັດເກົ່າແກ່ຂອງທ່ານ
ເຮົາຍັງຣະນຶກໄດ້ຢູ່ ເໝືອນຫຼັບແລ້ວຕື່ນຂຶ້ນ ສັນນັ້ນ

໓. ຂໍ້ທີ່ທ່ານຂົ່ມຂີ່ດ້ວຍກຳລັງແລ້ວຊ່ອຍປົດເປື້ອງເຮືອ
ເຊິ່ງຖືກນາກຜູ້ຮ້າຍຈັບໄວ້ໃນກະແສຂອງແມ່ນໍ້າຄົງຄາ
ຍ້ອນຄວາມອີດູໃນໝູ່ມະນຸດ
ນັ້ນເປັນສິນຂໍ້ວັດປະຕິບັດເກົ່າແກ່ຂອງທ່ານ

ເຮົາຍັງຣະນຶກໄດ້ຢູ່ ເໝືອນຫຼັບແລ້ວຕື່ນຂຶ້ນ ສັນນັ້ນ

໔. ເຮົາໄດ້ເປັນອັນເຕວາສິກຂອງທ່ານ
ນາມວ່າກັປປະມານົບ ເຮົາໄດ້ເຂົ້າໃຈທ່ານແລ້ວວ່າ
ມີຄວາມຮູ້ດີ ມີຂໍ້ວັດປະຕິບັດ ຂໍ້ນັ້ນ ເປັນສິນຂໍ້ວັດປະຕິບັດເກົ່າແກ່ຂອງທ່ານ
ເຮົາຍັງຣະນຶກໄດ້ຢູ່ ເໝືອນຫຼັບແລ້ວຕື່ນຂຶ້ນ ສັນນັ້ນ

ພະກະພິມຂາບທູນ ວ່າ
ພຣະອົງຊົງຮູ້ອາຍຸນີ້ຂອງຂ້າພຣະອົງແນ່ແທ້
ແມ່ນສິ່ງອື່ນພຣະອົງກໍຊົງຮູ້ໄດ້
ຍ້ອນພຣະອົງເປັນພຣະພຸດທະເຈົ້າ
ສະນັ້ນ ອານຸພາບອັນຮຸ່ງເຮືອງຂອງພຣະອົງນີ້
ຈຶ່ງຍັງພົມມະໂລກໃຫ້ສະຫວ່າງສະໄຫວ ຕັ້ງຢູ່

**ພະກະສູດທີ ໔ ຈົບ**

## ໕. ອຸປະຣາທິດຖິສູດ

## ວ່າດ້ວຍທິດຖິອີກແນວໜຶ່ງ

[໑໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພົມອົງໜຶ່ງໄດ້ເກີດທິດຖິຊົ່ວແນວນີ້ວ່າ ສະມະນະຫຼືພາມທີ່ຈະເພິ່ງມາໃນພົມມະໂລກນີ້ໄດ້ບໍ່ມີເລີຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຄິດຄຳນຶງຂອງພົມນັ້ນດ້ວຍພຣະຫະໄທແລ້ວ ຊົງຫາຍພຣະອົງຈາກພຣະເຊຕະວັນແລ້ວໄປຜາກົດໃນພົມມະໂລກນັ້ນ ປຽບຄື ບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງຂັດສະມາທິໃນອາກາດເບື້ອງເທິງ ພົມນັ້ນ ເຂົ້າເຕໂຊທາດກະສິນແລ້ວ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ມີຄວາມຄິດດັ່ງນີ້ວ່າ ບັດນີ້ ພຣະຜູ້ມີພຣະພາກປະທັບຢູ່ໄສນໍ? ທ່ານພຣະມະຫາໂມກຄັນລານະໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ປະທັບນັ່ງຂັດສະມາທິໃນອາກາດເບື້ອງເທິງພົມນັ້ນ ຊົງເຂົ້າເຕໂຊທາດກະສິນຢູ່ ດ້ວຍທິບພະຍະຈັກຂຸ ອັນບໍລິສຸດລ່ວງຈັກຂຸມະນຸດ ໄດ້ຫາຍໂຕຈາກພຣະເຊຕະວັນໄປຜາກົດໃນພົມມະໂລກນັ້ນ ປຽບຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະອາໄສທິດຕາເວັນອອກ ນັ່ງຂັດສະມາທິໃນອາກາດເບື້ອງເທິງຂອງພົມນັ້ນ (ແຕ່) ຕ່ຳກວ່າພຣະຜູ້

ມີພຣະພາກເຈົ້າ ເຂົ້າເຕໂຊທາດກະສິນແລ້ວ

ຄັ້ງນັ້ນ ທ່ານພຣະມະຫາກັດສະປະໄດ້ມີຄວາມຄິດດັ່ງນີ້ວ່າ ບັດນີ້ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃສນໍ? ທ່ານພຣະມະຫາກັດສະປະ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າດ້ວຍທິບພະຈັກຂຸ ຯລຯ ໄດ້ຫາຍໂຕຈາກພຣະເຊຕະວັນໄປຜາກົດໃນພົມມະໂລກນັ້ນ ປຽບຄືບຸຣຸດ ຜູ້ມີກຳລັງ ຯລຯ ສັນນັ້ນ ລຳດັບນັ້ນ ທ່ານພຣະມະຫາກັດສະປະ ອາໄສທິດໃຕ້ນັ່ງຂັດສະມາທິໃນອາກາດເບື້ອງເທິງຂອງພົມນັ້ນ (ແຕ່) ຕ່ຳກວ່າພຣະຜູ້ມີພຣະພາກເຈົ້າ ເຂົ້າເຕໂຊທາດກະສິນແລ້ວ

ຕໍ່ມາ ທ່ານພຣະມະຫາກັບປິນະໄດ້ມີຄວາມຄິດດັ່ງນີ້ວ່າ ບັດນີ້ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃສນໍ? ລຳດັບນັ້ນ ທ່ານພຣະມະຫາກັບປິນະໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ດ້ວຍທິບພະຈັກຂຸ ຯລຯ ໄດ້ຫາຍໂຕຈາກພຣະເຊຕະວັນໄປຜາກົດໃນພົມມະໂລກນັ້ນ ປຽບຄື ບຸຣຸດຜູ້ມີກຳລັງ ຯລຯ ສັນນັ້ນ ລຳດັບນັ້ນ ທ່ານພຣະມະຫາກັບປິນະອາໄສທິດຕາເວັນຕົກ ນັ່ງຂັດສະມາທິໃນອາກາດເບື້ອງເທິງພົມນັ້ນ (ແຕ່) ຕ່ຳກວ່າພຣະຜູ້ມີພຣະພາກເຈົ້າ ເຂົ້າເຕໂຊທາດກະສິນແລ້ວ

ລຳດັບນັ້ນ ທ່ານພຣະອະນຸຣຸດທະໄດ້ມີຄວາມຄິດດັ່ງນີ້ວ່າ ບັດນີ້ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ໃສນໍ? ທ່ານພຣະອະນຸຣຸດທະໄດ້ເຫັນພຣະຜູ້ມີພຣະພາກເຈົ້າດ້ວຍທິບພະຈັກຂຸ ຯລຯ ໄດ້ຫາຍໂຕຈາກພຣະເຊຕະວັນໄປຜາກົດໃນພົມມະໂລກນັ້ນ ປຽບຄືບຸຣຸດຜູ້ມີ ກຳລັງ ຯລຯ ສັນນັ້ນ ລຳດັບນັ້ນ ທ່ານພຣະອະນຸຣຸດທະອາໄສທິດເໜືອນັ່ງຂັດສະມາທິໃນ ອາກາດເບື້ອງເທິງຂອງພົມນັ້ນ (ແຕ່) ຕ່ຳກວ່າພຣະຜູ້ມີພຣະພາກເຈົ້າ ເຂົ້າເຕໂຊທາດກະສິນແລ້ວ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບພົມນັ້ນດ້ວຍຄາຖາ ວ່າ

ຜູ້ມີອາຍຸ ແມ່ນຈົນຮອດມື້ນີ້ທ່ານກໍຍັງມີທິດຖິຄືຄັ້ງກ່ອນຢູ່ແມ່ນບໍ?
ທ່ານຍັງເຫັນພຣະຣັດສະໝີອັນປະພັດສອນ (ຂອງພຣະຜູ້ມີພຣະພາກເຈົ້າ)
ກ້າວລ່ວງຣັດສະໝີອື່ນໃນພົມມະໂລກແມ່ນບໍ?

ພົມນັ້ນຕອບ ວ່າ

ຂ້າແດ່ ທ່ານຜູ້ມີຣະທຸກ
ຂ້າພະເຈົ້າບໍ່ໄດ້ມີທິດຖິຄືຄັ້ງກ່ອນ
ຂ້າພະເຈົ້າເຫັນພຣະຣັດສະໝີອັນປະພັດສອນ (ຂອງພຣະຜູ້ມີພຣະພາກເຈົ້າ)
ກ້າວລ່ວງຣັດສະໝີອື່ນໃນພົມມະໂລກຢູ່
ໃນມື້ນີ້ຂ້າພະເຈົ້າຈະກ່າວວ່າ
ເຮົາເປັນຜູ້ທ່ຽງ ເປັນຜູ້ໝັ້ນຄົງໄດ້ແນວໃດ?

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າເຮັດໃຫ້ພົມນັ້ນສະຫຼົດໃຈແລ້ວ ຊົງຫາຍພຣະອົງຈາກພົມມະໂລກນັ້ນ ໄປປາກົດໃນພຣະເຊຕະວັນ ປຽບຄື ບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າສັນນັ້ນ ລຳດັບນັ້ນ ພົມໄດ້ຮຽກພົມປາຣິສັດຊະອົງໜຶ່ງມາກ່າວວ່າ ມາເທີ້ນທ່ານຜູ້ນິຣະທຸກ ທ່ານຈົ່ງເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຈົນຮອດບ່ອນຢູ່ ຈົ່ງກ່າວກັບທ່ານພຣະມະຫາໂມກຄັນລານະແນວນີ້ວ່າ ທ່ານພຣະມະຫາໂມກຄັນລານະຜູ້ນິຣະທຸກ ມີຢູ່ບໍ່ນໍ ທີ່ສາວົກທັງຫຼາຍຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ແມ່ນເຫຼົ່າອື່ນເຊິ່ງມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ຄືແນວທ່ານພຣະມະຫາໂມກຄັນລານະ ທ່ານພຣະກັດສະປະ ທ່ານພຣະກັບປິນະແລະທ່ານພຣະອະນຸຣຸດທະ

ພົມປາຣິສັດຊະນັ້ນ ຮັບຄຳຂອງພົມນັ້ນວ່າ ແນວນັ້ນ ທ່ານຜູ້ນິຣະທຸກ ໄດ້ຫາຍໂຕຈາກພົມມະໂລກນັ້ນ ໄປປາກົດຂ້າງໜ້າທ່ານພຣະມະຫາໂມກຄັນລານະ ປຽບຄືບຸຣຸດຜູ້ມີກຳລັງ ຯລຯ ສັນນັ້ນ ຄັ້ງນັ້ນ ພົມປາຣິສັດຊະນັ້ນອະພິວາດທ່ານພຣະມະຫາ ໂມກຄັນລານະແລ້ວ ຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາໂມກຄັນລານະດັ່ງນີ້ວ່າ ຂ້າແດ່ ທ່ານຜູ້ນິຣະທຸກ ມີຢູ່ບໍ່ນໍ? ຯລຯ ແລະທ່ານພຣະອະນຸຣຸດທະ

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະ ໄດ້ກ່າວກັບພົມປາຣິສັດຊະດ້ວຍຄາຖາ ວ່າ

ສາວົກທັງຫຼາຍ ຂອງພຣະພຸດທະເຈົ້າ
ຜູ້ໄດ້ວິດຊາ ໓ ບັນລຸອິດທິວິທີຍານ
ສະຫຼາດໃນເຈໂຕປະຣິຍະຍານ
ສິ້ນອາສະວະແລ້ວ ເປັນພຣະອະຣະຫັນ ມີຢູ່ຫຼາຍ

ລຳດັບນັ້ນ ພົມປາຣິສັດຊະນັ້ນ ຊົມຊື່ນຍິນດີພາສິດຂອງທ່ານພຣະມະຫາໂມກຄັນລານະແລ້ວ ເຂົ້າໄປຫາພົມນັ້ນຮອດບ່ອນຢູ່ ໄດ້ກ່າວກັບພົມນັ້ນວ່າ ທ່ານຜູ້ນິຣະທຸກ ທ່ານພຣະມະຫາໂມກຄັນລານະກ່າວແນວນີ້ ວ່າ

ສາວົກທັງຫຼາຍຂອງພຣະພຸດທະເຈົ້າ
ຜູ້ໄດ້ວິດຊາ ໓ ບັນລຸອິດທິວິທີຍານ
ສະຫຼາດໃນເຈໂຕປະຣິຍະຍານ
ສິ້ນອາສະວະແລ້ວ ເປັນພຣະອະຣະຫັນ ມີຢູ່ຫຼາຍ

ພົມປາຣິສັດຊະໄດ້ກ່າວຄຳນີ້ແລ້ວ ພົມມີໃຈຍິນດີ ຊົມຊື່ນພາສິດຂອງພົມປາຣິສັດຊະນັ້ນ

**ອຸປະຣາທິດຖິສູດທີ ໕ ຈົບ**

# ៩. ປະມາທະສູດ

## ວ່າດ້ວຍຜູ້ຜະໝາດ

[໑໗໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫຼີບຫຼີກປະທັບພັກຜ່ອນຢູ່ໃນບ່ອນພັກກາງເວັນ ຄັ້ງນັ້ນ ສຸພົມປັດເຈກພົມ ແລະ ສຸດທາວາດປັດເຈກພົມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ໄດ້ຢືນອີງບານປະຕູຄົນລະຂ້າງ ລຳດັບນັ້ນ ສຸພົມປັດເຈກພົມໄດ້ກ່າວກັບສຸດທາວາດປັດເຈກພົມດັ່ງນີ້ວ່າ ທ່ານຜູ້ນິຣະທຸກ ບໍ່ແມ່ນເວລາອັນຄວນທີ່ຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າກ່ອນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີບຫຼີກປະທັບພັກຜ່ອນຢູ່ໃນບ່ອນພັກກາງເວັນ ກໍພົມມະໂລກນັ້ນບໍລິບູນ (ດ້ວຍຄວາມສຸກແລະເບີກບານດ້ວຍອະພິນຍາ) ແຕ່ພົມໃນພົມມະໂລກນັ້ນ ຍ່ອມຢູ່ດ້ວຍຄວາມຜະໝາດ ມາເທີ້ນ ພວກເຮົາຈັກເຂົ້າໄປພົມມະໂລກ ຄວນເຮັດໃຫ້ພົມນັ້ນສະຫຼົດໃຈ ສຸດທາວາດປັດເຈກພົມໄດ້ຮັບຄຳຂອງສຸພົມປັດເຈກພົມວ່າ ແນວນັ້ນ ທ່ານຜູ້ນິຣະທຸກ

ຄັ້ງນັ້ນ ສຸພົມປັດເຈກພົມແລະສຸດທາວາດປັດເຈກພົມ ໄດ້ຫາຍໂຕຈາກເບື້ອງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ໄປຜາກົດໃນພົມມະໂລກນັ້ນ ປຽບຄືບຸຣຸດ ຜູ້ມີກຳລັງ ຯລຯ ສັນນັ້ນ ພົມນັ້ນໄດ້ເຫັນພົມເຫຼົ່ານັ້ນກຳລັງມາແຕ່ໄກ ໄດ້ກ່າວກັບພົມເຫຼົ່ານັ້ນວ່າ ທ່ານຜູ້ນິຣະທຸກ ເຊີນເທີ້ນ ພວກທ່ານມາຈາກໃສກັນນໍ?

ພົມເຫຼົ່ານັ້ນ ກ່າວວ່າ ທ່ານຜູ້ນິຣະທຸກ ພວກເຮົາມາຈາກສຳນັກຂອງພຣະຜູ້ມີພຣະພາກຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ອັນໜຶ່ງ ທ່ານຈະໄປສູ່ທີ່ບຳລຸງຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າແມ່ນບໍ?

ເມື່ອພົມທັງ ໔ ນັ້ນ ກ່າວແລ້ວແນວນີ້ ພົມນັ້ນອົດກັ້ນຄຳນັ້ນບໍ່ໄດ້ ຈຶ່ງເນຣະມິດຕົນເປັນ ໑,໐໐໐ ແລ້ວໄດ້ກ່າວຄຳນີ້ກັບສຸພົມປັດເຈກພົມວ່າ ທ່ານຜູ້ນິຣະທຸກ ທ່ານເຫັນອິດທານຸພາບປານນີ້ຂອງເຮົາບໍ?

ສຸພົມປັດເຈກພົມກ່າວວ່າ ເຮົາເຫັນອິດທານຸພາບປານນີ້ຂອງທ່ານແລ້ວ

ພົມນັ້ນກ່າວວ່າ ເຮົານັ້ນ ເປັນຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ຈັກໄປສູ່ທີ່ບຳລຸງຂອງສະມະນະ ຫຼື ພາມອື່ນເຮັດຫຍັງ?

ລຳດັບນັ້ນ ສຸພົມປັດເຈກພົມເນຣະມິດຕົນເປັນ ໔,໐໐໐ ອົງ ແລ້ວໄດ້ກ່າວຄຳນີ້ກັບພົມວ່າ ທ່ານຜູ້ນິຣະທຸກ ທ່ານເຫັນອິດທານຸພາບປານນີ້ຂອງເຮົາບໍ?

ພົມນັ້ນກ່າວວ່າ ເຮົາເຫັນອິດທານຸພາບປານນີ້ຂອງທ່ານແລ້ວ

ສຸພົມປັດເຈກພົມກ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນທໍ່ນັ້ນ ມີລິດຫລາຍກວ່າ ແລະມີອານຸພາບຍິ່ງໃຫຍ່ກວ່າທ່ານແລະເຮົາດ້ວຍ ທ່ານຜູ້ມີຣະທຸກ ທ່ານເພິ່ງໄປສູ່ທີ່ບໍາລຸງຂອງ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າເທີ້ນ

ຄັ້ງນັ້ນ ພົມນັ້ນ ໄດ້ກ່າວກັບສຸພົມປັດເຈກພົມດ້ວຍຄາຖາ ວ່າ

ຂ້າແດ່ ພົມ ວິມານຂອງເຮົາຜູ້ມີຊານນີ້ນັ້ນມີຮູບຄຸດ ໑໐໐ ຮູບ
ມີຮູບທົງ ໔໐໐ ຮູບ ມີຮູບແຫຼວກັນໄກ ໕໐໐ ຮູບ
ຍ່ອມຮຸ່ງເຮືອງສ່ອງສະຫວ່າງຢູ່ໃນທິດເໜືອ

ສຸພົມປັດເຈກພົມແລະສຸດທາວາດປັດເຈກພົມກ່າວ ວ່າ

ວິມານຂອງທ່ານນັ້ນເຖິງຈະຮຸ່ງເຮືອງ
ສ່ອງສະຫວ່າງຢູ່ໃນທິດເໜືອກໍຈິງ
ຍ້ອນເຫັນໂທດໃນຮູບ (ແລະ) ຍ້ອນເຫັນຮູບອັນຫວັ່ນໄຫວຢູ່ທຸກເມື່ອ
ພຣະສາດສະດາຜູ້ມີພຣະປັນຍາດີ ຈຶ່ງບໍ່ຊົງຍິນດີໃນຮູບ

ຄັ້ງນັ້ນ ສຸພົມປັດເຈກພົມແລະສຸດທາວາດປັດເຈກພົມ ໃຫ້ພົມນັ້ນສະຫຼົດໃຈແລ້ວຫາຍໂຕ ໄປໃນບ່ອນນັ້ນເອງ ອັນໜຶ່ງ ພົມນັ້ນສະໄໝຕໍ່ມາໄດ້ໄປສູ່ທີ່ບໍາລຸງຂອງພຣະຜູ້ມີ ພຣະພາກຜູ້ເປັນ ພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າແລ້ວ

**ປະມາທະສູດທີ ໑ ຈົບ**

# ៗ. ໂກກາລິກະສູດ

## ວ່າດ້ວຍໂກກາລິກະພິກຂຸ

[໑໗໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີບຫຼີກປະທັບພັກຜ່ອນຢູ່ໃນບ່ອນພັກກາງເວັນ ຄັ້ງນັ້ນ ສຸພົມປັດເຈກພົມແລະສຸດທາວາດປັດເຈກພົມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດ ບ່ອນຢູ່ ໄດ້ຢືນອີງບານປະຕູຄົນລະຂ້າງ ລໍາດັບນັ້ນ ສຸພົມປັດເຈກພົມຜາຣົບ ໂກກາລິກະພິກຂຸ ໄດ້ກ່າວຄາຖານີ້ໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ໃຜຜູ້ມີປັນຍາໃນໂລກນີ້
ຈະເພິ່ງກຳນົດນັບພຣະຂີນາສົບຜູ້ມີຄຸນອັນປະມານບໍ່ໄດ້
ເຮົາເຫັນວ່າຜູ້ນັ້ນມີປັນຍາທຶບຍັງເປັນປຸຖຸຊົນຢູ່
ບັງອາດກຳນົດນັບພຣະຂີນາສົບຜູ້ມີຄຸນອັນປະມານບໍ່ໄດ້

**ໂກກາລິກະສູດທີ ໗ ຈົບ**

# ໘. ກະຕະໂມຣະກະຕິດສະກະສູດ

## ວ່າດ້ວຍກະຕະໂມຣະກະຕິດສະກະພິກຂຸ

[໑໗໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີບຫຼີກປະທັບພັກຜ່ອນຢູ່ໃນບ່ອນພັກກາງເວັນ ຄັ້ງນັ້ນ ສຸພົມປັດເຈກພົມແລະສຸດທາວາດປັດເຈກພົມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຢືນອີງບານປະຕູຄົນລະຂ້າງ ລຳດັບນັ້ນ ສຸດທາວາດປັດເຈກພົມຜາຣົບກະຕະໂມຣະກະຕິດສະກະພິກຂຸ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ໃຜຜູ້ມີປັນຍາໃນໂລກນີ້
ຈະເພິ່ງກຳນົດນັບພຣະຂີນາສົບຜູ້ມີຄຸນອັນປະມານບໍ່ໄດ້
ເຮົາເຫັນວ່າຜູ້ນັ້ນມີປັນຍາທຶບຍັງເປັນປຸຖຸຊົນຢູ່
ບັງອາດກຳນົດນັບພຣະຂີນາສົບຜູ້ມີຄຸນອັນປະມານບໍ່ໄດ້

**ກະຕະໂມຣະກະຕິດສະກະສູດທີ ໘ ຈົບ**

# ໙. ຕຸທຸພົມສູດ

## ວ່າດ້ວຍຕຸທຸປັດເຈກພົມ

[໑໘໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ໂກກາລິກະພິກຂຸອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ເມື່ອຣາຕີຜ່ານໄປຕຸທຸປັດເຈກພົມມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປຫາໂກກາລິກະພິກຂຸຈົນຮອດບ່ອນຢູ່ ຢືນຢູ່ກາງອາກາດໄດ້ກ່າວກັບໂກກາລິກະພິກຂຸດັ່ງນີ້ວ່າ ທ່ານໂກກາລິກະ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະ

ເທີ້ນ ຍ້ອນທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະ ເປັນຜູ້ມີສິນເປັນທີ່ຮັກ

ໂກກາລິກະພິກຂຸຖາມວ່າ ຜູ້ມີອາຍຸ ທ່ານເປັນໃຜ?

ຕຸທຸປັດເຈກພົມຕອບວ່າ ເຮົາເປັນຕຸທຸປັດເຈກພົມ?

ໂກກາລິກະພິກຂຸກ່າວວ່າ ຜູ້ມີອາຍຸ ທ່ານໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ ເປັນອະນາຄາມີແລ້ວບໍ່ແມ່ນບໍ? ເມື່ອເປັນແນວນີ້ ເປັນຫຍັງ? ທ່ານຈຶ່ງມາທີ່ນີ້ອີກ ທ່ານຈົ່ງເຫັນວ່າ ຄວາມຜິດນີ້ຂອງທ່ານມີຢູ່ເທີ້ນ

ຕຸທຸປັດເຈກພົມໄດ້ກ່າວ ວ່າ

ຜະຣຸສະວາຈາ (ຄຳຫຍາບ) ເປັນຄືຜືງ
ເຄື່ອງຕັດຕົນຂອງຄົນພານຜູ້ກ່າວຄຳຊົ່ວ
ຍ່ອມເກີດທີ່ປາກຂອງບຸຣຸດ
ຜູ້ໃດສັນເສີນຄົນທີ່ຄວນຕິຕຽນ
ຫຼືຕິຕຽນຄົນທີ່ຄວນສັນເສີນ
ຜູ້ນັ້ນຊື່ວ່າສັ່ງສົມຄວາມຜິດໄວ້ດ້ວຍປາກ
ຍ່ອມບໍ່ປະສົບຄວາມສຸກ ຍ້ອນຄວາມຜິດນັ້ນ

ການປຣາໄຊດ້ວຍຊັບ
ໃນການຫລີ້ນການພະນັນຈົນໝົດໂຕນີ້
ເປັນຄວາມຜິດພຽງເລັກໜ້ອຍ

ແຕ່ການທີ່ບຸກຄົນມີໃຈປະທຸດສະຮ້າຍ
ໃນບຸກຄົນຜູ້ດຳເນີນໄປດີແລ້ວນີ້ທໍ່ນັ້ນ
ເປັນຄວາມຜິດນັກຫລາຍກວ່າ

ບຸກຄົນຜູ້ຕັ້ງວາຈາແລະໃຈອັນຊົ່ວ ຕິຕຽນພຣະອະຣິຍະ
ຍ່ອມເຂົ້າເຖິງນະຣົກສິ້ນ ໑໓໖,໐໐໐ ນິຣັບພຸທະກັບ
ກັບອີກ ໕ ອັບພຸທະກັບ

**ຕຸທຸພົມສູດທີ ໙ ຈົບ**

# ໑໐. ໂກກາລິກະສູດ

## ວ່າດ້ວຍໂກກາລິກະພິກຂຸ

[໑໗໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ໂກກາລິກະພິກຂຸເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະເປັນຜູ້ມີຄວາມປາຖະໜາຊົ່ວ ຕົກຢູ່ໃນອຳນາດ ຄວາມປາຖະໜາຊົ່ວ

ເມື່ອໂກກາລິກະພິກຂຸກ່າວແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂກກາລິກະພິກຂຸດັ່ງນີ້ວ່າ ໂກກາລິກະ ທ່ານຢ່າກ່າວແນວນັ້ນ ໂກກາລິກະ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງເຮັດຈິດ ໃຫ້ເຫຼື້ອມໃສໃນສາຣີບຸດແລະໂມກຄັນລານະເທີ້ນ ຍ້ອນສາຣີບຸດແລະໂມກຄັນລານະ ເປັນຜູ້ມີສີນເປັນທີ່ຮັກ

ແມ່ນເທື່ອທີ ໒ ໂກກາລິກະພິກຂຸຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກເຈົ້າ ຊົງເປັນທີ່ຕັ້ງແຫ່ງສັດທາຂອງຂ້າພຣະອົງ ຊົງມີພຣະພຸດທະພົດທີ່ຂ້າພຣະອົງເຊື່ອຖືໄດ້ກໍຈິງ ເຖິງແນວນັ້ນ ທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະກໍຍັງເປັນຜູ້ປາຖະໜາຊົ່ວ ຕົກຢູ່ໃນອຳນາດຄວາມປາຖະໜາຊົ່ວ

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂກກາລິກະພິກຂຸດັ່ງນີ້ວ່າ ໂກກາລິກະ ທ່ານຢ່າກ່າວແນວນັ້ນ ໂກກາລິກະ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນ ສາຣີບຸດແລະໂມກຄັນລານະເທີ້ນ ຍ້ອນສາຣີບຸດແລະໂມກຄັນລານະ ເປັນຜູ້ມີສີນເປັນທີ່ຮັກ

ແມ່ນເທື່ອທີ ໓ ໂກກາລິກະພິກຂຸກໍຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ຯລຯ ຕົກຢູ່ໃນອຳນາດຄວາມປາຖະໜາຊົ່ວ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂກກາລິກະພິກຂຸວ່າ ຯລຯ ຍ້ອນສາຣີບຸດແລະໂມກຄັນລານະ ເປັນຜູ້ມີສີນເປັນທີ່ຮັກ

ຄັ້ງນັ້ນ ໂກກາລິກະພິກຂຸລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຈາກໄປ

ເມື່ອໂກກາລິກະພິກຂຸຈາກໄປບໍ່ດົນ ຮ່າງກາຍກໍມີຕຸ່ມຂະໜາດທໍ່ໝາກຜັກກາດເກີດຂຶ້ນທົ່ວ

ຮ່າງ ຕຸ່ມເຫຼົ່ານັ້ນໃຫຍ່ທໍ່ເມັດພັນຜັກກາດ ແລ້ວກໍໃຫຍ່ຂຶ້ນທໍ່ເມັດຖົ່ວຂຽວ ໃຫຍ່ທໍ່ເມັດຖົ່ວດໍາ ໃຫຍ່ທໍ່ເມັດໝາກກະທັນ ໃຫຍ່ທໍ່ເມັດໝາກເບົາ ໃຫຍ່ທໍ່ໝາກຂາມປ້ອມ ໃຫຍ່ທໍ່ໜ່ວຍໝາກຕູມອ່ອນ ໃຫຍ່ທໍ່ໜ່ວຍໝາກຕູມແກ່ແລ້ວກໍແຕກເປື່ອຍ ໜອງແລະເລືອດໄຫຼປູດອອກມາ

ຄັ້ງນັ້ນ ໂກກາລິກະພິກຂຸໄດ້ມໍຣະນະພາບຍ້ອນອາພາດນັ້ນເອງ ແລ້ວໄປເກີດໃນປະທຸມະນະຣົກ ຍ້ອນມີຈິດຜູກອາຄາດໃນທ່ານພຣະສາຣີບຸດ ແລະ ທ່ານພຣະໂມກຄັນລານະ

ຄັນເມື່ອຣາຕີຜ່ານໄປ ທ້າວສະຫໍາບໍດີພົມມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໂກກາລິກະພິກຂຸມໍຣະນະພາບແລ້ວ ໄປເກີດໃນປະທຸມະນະຣົກຍ້ອນມີຈິດຜູກອາຄາດໃນທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະ ເມື່ອທ້າວສະຫໍາບໍດີພົມຂາບທູນດັ່ງນີ້ແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທໍາປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

ເມື່ອຣາຕີນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າພິກຂຸທັງຫຼາຍ ຄືນນີ້ເມື່ອຣາຕີຜ່ານໄປ ທ້າວສະຫໍາບໍດີພົມມີວັນນະງົດງາມຢ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າມາຫາເຮົາຮອດບ່ອນຢູ່ອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນໄດ້ກ່າວກັບເຮົາດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໂກກາລິກະພິກຂຸມໍຣະນະພາບແລ້ວ ໄປເກີດໃນປະທຸມະນະຣົກ ຍ້ອນມີຈິດຜູກອາຄາດໃນທ່ານພຣະສາຣີບຸດ ແລະ ທ່ານພຣະໂມກຄັນລານະ

ພິກຂຸທັງຫຼາຍ ທ້າວສະຫໍາບໍດີພົມກ່າວຄໍານີ້ແລ້ວອະພິວາດເຮົາ ກະທໍາປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ປະມານອາຍຸໃນປະທຸມະນະຣົກດົນທໍ່ໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ປະມານອາຍຸໃນປະທຸມະນະຣົກດົນຫຼາຍ ປະມານອາຍຸໃນປະທຸມະນະຣົກນັ້ນ ຍາກທີ່ຈະນັບໄດ້ວ່າ ປະມານປີທໍ່ນີ້ ປະມານ ໑໐໐ ປີທໍ່ນີ້ ປະມານ ໑,໐໐໐ ປີທໍ່ນີ້ ປະມານ ໑໐໐,໐໐໐ ປີທໍ່ນີ້

ພິກຂຸທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງພໍຈະຍົກອຸປະມາໄດ້ບໍ ຂ້ານ້ອຍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໄດ້ພິກຂຸ ແລ້ວຕັດວ່າ ພິກຂຸ ໜຶ່ງກວຽນເມັດງາຂອງຊາວໂກສົນມີອັດຕາ ໒໐ ຂາຣີ[๑] ລ່ວງໄປແລ້ວ ໑໐໐,໐໐໐ ປີ ບຸຣຸດຈຶ່ງນໍາເມັດງາອອກຈາກກວຽນນັ້ນໜຶ່ງເມັດ ເມັດງາໜຶ່ງກວຽນຂອງຊາວໂກສົນເຊິ່ງມີອັດຕາ ໒໐ ຂາຣີນັ້ນ ຈະເພິ່ງໝົດໄປ

ໂດຍທຳນອງນີ້ຍັງໄວກວ່າ ແຕ່ວ່າ ໑ ອັບພຸທະນະຣົກ໌ ຍັງບໍ່ໝົດໄປ

| | | | | |
|---|---|---|---|---|
| ໔໐ | ອັບພຸທະນະຣົກ | ເປັນ | ໑ | ນິຣັບພຸທະນະຣົກ |
| ໔໐ | ນິຣັບພຸທະນະຣົກ | ເປັນ | ໑ | ອະພັບພະນະຣົກ |
| ໔໐ | ອະພັບພະນະຣົກ | ເປັນ | ໑ | ອຸທະທະນະຣົກ |
| ໔໐ | ອຸທະທະນະຣົກ | ເປັນ | ໑ | ອັດຕະນະຣົກ |
| ໔໐ | ອັດຕະນະຣົກ | ເປັນ | ໑ | ກຸມຸທະນະຣົກ |
| ໔໐ | ກຸມຸທະນະຣົກ | ເປັນ | ໑ | ໂສຄັນທິກະນະຣົກ |
| ໔໐ | ໂສຄັນທິກະນະຣົກ | ເປັນ | ໑ | ອຸບປະລະນະຣົກ |
| ໔໐ | ອຸບປະລະນະຣົກ | ເປັນ | ໑ | ປຸນທະຣິກະນະຣົກ |
| ໔໐ | ປຸນທະຣິກະນະຣົກ | ເປັນ | ໑ | ປະທຸມະນະຣົກ |

ໂກກາລິກະພິກຂຸໄປເກີດໃນປະທຸມະນະຣົກແລ້ວ ຍ້ອນມີຈິດຜູກອາຄາດໃນສາຣີບຸດແລະໂມກຄັນລານະ

ພຣະຜູ້ມີພາກຜູ້ສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຜະຣຸສະວາຈາ (ຄຳຫຍາບ) ເປັນຄືຜີ່ງ
ເຄື່ອງຕັດຕົນຂອງຄົນພານຜູ້ກ່າວຄຳຊົ່ວ
ຍ່ອມເກີດທີ່ປາກຂອງບຸຣຸດ
ຜູ້ໃດສັນເສີນຄົນທີ່ຄວນຕິຕຽນ
ຫຼື ຕິຕຽນຄົນທີ່ຄວນສັນເສີນ
ຜູ້ນັ້ນຊື່ວ່າສັ່ງສົມຄວາມຜິດໄວ້ດ້ວຍປາກ
ຍ່ອມບໍ່ປະສົບຄວາມສຸກ ຍ້ອນຄວາມຜິດນັ້ນ

ການປຣາໄຊດ້ວຍຊັບ
ໃນການຫລິ້ນການພະນັນຈົນໝົດໂຕນີ້
ເປັນຄວາມຜິດພຽງເລັກໜ້ອຍ
ແຕ່ການທີ່ບຸກຄົນມີໃຈປະທຸດສະຮ້າຍ
ໃນບຸກຄົນຜູ້ດຳເນີນໄປດີແລ້ວນີ້ທີ່ນັ້ນ
ເປັນຄວາມຜິດມັກຫຼາຍກວ່າ

ບຸກຄົນຜູ້ຕັ້ງວາຈາແລະໃຈອັນຊົ່ວ ຕິຕຽນພຣະອະຣິຍະ

ຍ່ອມເຂົ້າເຖິງນະຮົກສິ້ນ ໑໓໖,໐໐໐ ນິຣັບພຸທະກັບ
ກັບອີກ ໕ ອັບພຸທະກັບ[១]

**ໂກກາລິກະສູດທີ ໑໐ ຈົບ**

**ວັກທີ ໑ ຈົບ**

**ລວມພຣະສູດທີ່ ມີໃນວັກນີ້ ຄື**



# ໔. ທຸຕິຍະວັກ

## ໝວດທີ ໔

## ໑. ສະນັງກຸມາຣະສູດ

### ວ່າດ້ວຍສະນັງກຸມາຣະພົມ

[໑໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຝັ່ງແມ່ນ້ຳສັບປິນີ ເຂດນະຄອນຣາດຊະຄຶ ຄັນເມື່ອຣາຕີຜ່ານໄປ ສະນັງກຸມາຣະພົມມີວັນນະງົດງາມຍ່າງຍິ່ງ ເປັງຣັດສະໝີໃຫ້ສະຫວ່າງທົ່ວຝັ່ງແມ່ນ້ຳສັບປິນີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖານີ້ໃນບ່ອນປະທັບຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່
ກະສັດຈັດວ່າປະເສີດທີ່ສຸດ
ສ່ວນທ່ານຜູ້ພຸງບພ້ອມດ້ວຍວິດຊາແລະຈະຣະນະ[១]
ຈັດວ່າປະເສີດທີ່ສຸດໃນໝູ່ເທວະດາແລະມະນຸດ[២]

ສະນັງກຸມາຣະພົມເມື່ອຂາບທູນຄຳນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ຄັ້ງນັ້ນ ສະນັງກຸມາຣະພົມຮູ້ວ່າ ພຣະສາດສະດາຂອງເຮົາຊົງພໍພຣະທະໄທແລ້ວ ຈຶ່ງຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຫາຍໂຕໄປໃນບ່ອນນັ້ນເອງ

**ສະນັງກຸມາຣະສູດທີ ໑ ຈົບ**

# ໔. ເທວະທັດຕະສູດ

## ວ່າດ້ວຍພຣະເທວະທັດ

[໑໗໖] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄື ເມື່ອພຣະເທວະທັດຈາກໄປບໍ່ດົນ ຄັນເມື່ອຣາຕີຜ່ານໄປ ທ້າວສະຫຳບໍດີພົມມີວັນນະງົດງາມຍ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພູຄິດຊະກູດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ຜາຣົບພຣະເທວະທັດ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ສັກກາຣະຍ່ອມຂ້າບຸຣຸດຊົ່ວ
ຄືປີກ້ວຍຂ້າຕົ້ນກ້ວຍ
ຂີໄຜ່ຂ້າຕົ້ນໄຜ່ ດອກອໍ້ຂ້າຕົ້ນອໍ້
ລູກມ້າອັດສະດອນຂ້າແມ່ມ້າ ສັນນັ້ນ[¹]

**ເທວະທັດຕະສູດທີ ໔ ຈົບ**

# ໕. ອັນທະກະວິນທະສູດ

## ວ່າດ້ວຍເລື້ອງອັນທະກະວິນທະຄາມ

[໑໗໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ອັນທະກະວິນທະຄາມ ແຄວັນມະຄົດ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ໃນກາງແຈ້ງ ໃນຣາຕີອັນມືດມິດແລະຝົນກຳລັງຕົກປະປາຍຢູ່ ຄັນເມື່ອຣາຕີຜ່ານໄປ ທ້າວສະຫຳບໍດີພົມມີວັນນະງົດງາມຍ່າງຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວອັນທະກະວິນທະຄາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວຄາຖາເຫຼົ່ານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພິກຂຸເພິ່ງອາໄສບ່ອນນອນແລະບ່ອນນັ່ງອັນສະຫງັດ
ເພິ່ງປະພຶດເພື່ອຄວາມລຸດພົ້ນຈາກສັງໂຍດ
ຖ້າພິກຂຸບໍ່ປະສົບຄວາມຍິນດີໃນບ່ອນນັ້ນ
ເພິ່ງມີສະຕິ ມີປັນຍາເຄື່ອງບໍລິຫານ ຢູ່ໃນທ່າມກາງສົງ

ພິກຂຸເມື່ອທ່ຽວບິນທະບາດຕາມລຳດັບຕະກູນ
ເພິ່ງມີປັນຍາເຄື່ອງບໍລິຫານ ຄຸ້ມຄອງອິນຊີ
ເພິ່ງອາໄສບ່ອນນອນບ່ອນນັ່ງອັນສະຫງັດ
ພົ້ນຈາກໄພ[໑] ນ້ອມໄປໃນອະໄພ[໒]

ພິກຂຸເຖິງນັ່ງຢູ່ໃນບ່ອນທີ່ມີສັດເລືອຄານອັນເປັນຕາຢ້ານ
ມີສາຍຟ້າແມບເຫຼື້ອມເມືອບມາບ ປັ້ງງພຸ້ນປັ້ງງພີ້
ຝົນຕົກໃນຄືນອັນມືດມິດ
ກໍປາສະຈາກຄວາມຂົນທົວລຸກ

ຂ້າພຣະອົງຢ້ານມຸສາວາດ ຈຶ່ງບໍ່ອາດຄຳນວນດ້ວຍໃຈ
ຂອງຂ້າພຣະອົງໄດ້ວ່າ ເລື້ອງນີ້ຂ້າພຣະອົງໄດ້ເຫັນແລ້ວແນ່
ຂ້າພຣະອົງບໍ່ກ່າວວ່າ ໃນເລື້ອງນີ້ເປັນແນວນີ້ ໃນເລື້ອງນີ້ເປັນແນວນີ້
ໃນພົມມະຈັນໜຶ່ງ[໓]ມີພຣະຂີນາສົບຜູ້ລະຄວາມຕາຍໄດ້ ໑,໐໐໐ ອົງ

ພຣະເສຂະຫຼາຍກວ່າ ໕໐໐ ອົງໄປ
໑໐ ອົງແດ່ ໑໐໐ ອົງແດ່
ແລະຜູ້ເຖິງກະແສນິບພານທັງໝົດບໍ່ໄປສູ່ເດຍຣັດສານພູມ
ສ່ວນໝູ່ສັດນອກນີ້ລ້ວນເປັນຜູ້ມີສ່ວນໄດ້ຮັບຜົນບຸນ

**ອັນທະກະວິນທະສູດທີ ໓ ຈົບ**

# ໔. ອະຣຸນະວະຕີສູດ

## ວ່າດ້ວຍເລື້ອງເມືອງອະຣຸນວະດີ

[໑໘໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໗ລ໗ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດດັ່ງນີ້ວ່າ ພິກຂຸທັງຫຼາຍ

ເລື້ອງເຄີຍມີມາແລ້ວ ມີພຣະຣາຊາພຣະນາມວ່າອະຣຸນ ຣາດຊະທານີຂອງພຣະເຈົ້າອະຣຸນ ຊື່ວ່າ ອະຣຸນວະດີ ພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຊົງເຂົ້າໄປອາໄສອະຣຸນວະດີຣາດຊະທານີປະທັບຢູ່ ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າສິຂີ ໄດ້ມີຄູ່ພຣະສາວົກນາມວ່າ ອະພິພູແລະສຳພະວະເປັນຄູ່ພຣະສາວົກຊັ້ນດີເລີດ

ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຮັບສັ່ງຮຽກອະພິພູພິກຂຸມາຕັດວ່າ ພາມ ມາເທີ້ນ ເຮົາຈັກເຂົ້າໄປພົມມະໂລກຊັ້ນໃດຊັ້ນໜຶ່ງຊົ່ວເວລາໜຶ່ງ ຈົນກວ່າຈະເຖິງເວລາສັນພັດຕາຫານ ພິກຂຸທັງຫຼາຍ ອະພິພູພິກຂຸທູນຮັບສະໜອງພຣະດຳຣັດແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ແລະອະພິພູພິກຂຸໄດ້ຫາຍໂຕຈາກອະຣຸນວະດີຣາດຊະທານີ ໄປຜາກົດໃນພົມມະໂລກນັ້ນ ປຽບຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຮັບສັ່ງຮຽກອະພິພູພິກຂຸມາຕັດວ່າ ພາມ ທຳມີກະຖາຈົ່ງຜາກົດຊັດແຈ້ງແກ່ພົມ ພົມບໍລິສັດແລະພົມປາຣິສັດຊະທັງຫຼາຍເທີ້ນ

ອະພິພູພິກຂຸທູນຮັບສະໜອງພຣະດຳຣັດແລ້ວ ໄດ້ຊີ້ແຈ່ງໃຫ້ພົມ ພົມບໍລິສັດແລະພົມປາຣິສັດຊະທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ

ພິກຂຸທັງຫຼາຍ ໄດ້ຂ່າວວ່າ ໃນການນັ້ນ ພົມ ພົມບໍລິສັດ ແລະ ພົມປາຣິສັດຊະທັງຫຼາຍ ຍົກໂທດຕິຕຽນໂພນທະນາວ່າ ທ່ານຜູ້ຈະເລີນ ໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດ ກໍເມື່ອພຣະສາດສະດາປະທັບຢູ່ສະເພາະໜ້າ ຍ້ອນເຫດໃດ ພຣະສາວົກຈຶ່ງສະແດງທຳ

ລຳດັບນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຕັດກັບອະພິພູພິກຂຸວ່າ ພາມ ພົມ ພົມບໍລິສັດ ແລະ ພົມປາຣິສັດຊະເຫຼົ່ານັ້ນ ພາກັນຕິຕຽນວ່າ ທ່ານຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ກໍເມື່ອພຣະສາດສະດາປະທັບຢູ່ສະເພາະໜ້າ ຍ້ອນເຫດໃດ ພຣະສາວົກຈຶ່ງສະແດງທຳ ພາມ ຖ້າເປັນແນວນັ້ນ ທ່ານຈົ່ງເຮັດໃຫ້ພົມ ພົມບໍລິສັດ ແລະ ພົມປາຣິສັດຊະທັງຫຼາຍ ສະຫຼົດໃຈໃຫ້ຍິ່ງຂຶ້ນໄປກວ່ານີ້

ອະພິພູພິກຂຸທູນຮັບສະໜອງພຣະດຳຣັດແລ້ວ ຜາກົດກາຍສະແດງທຳແດ່ ບໍ່ປາກົດກາຍ

ສະແດງທຳແດ່ ຜາກົດກາຍທ່ອນລຸ່ມ ບໍ່ປາກົດກາຍທ່ອນເທິງສະແດງທຳແດ່ ຜາກົດກາຍທ່ອນເທິງ ບໍ່ປາກົດກາຍທ່ອນລຸ່ມສະແດງທຳແດ່

ພິກຂຸທັງຫຼາຍ ໄດ້ຂ່າວວ່າໃນການນັ້ນ ພົມ ພົມບໍລິສັດ ແລະ ພົມປາຣິສັດຊະທັງຫຼາຍໄດ້ມີຈິດອັດສະຈັນເກີດຂຶ້ນວ່າ ໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດ ທ່ານຜູ້ຈະເລີນທັງຫຼາຍຄວາມທີ່ສະມະໜະເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍ

ຄັ້ງນັ້ນ ອະພິພູພິກຂຸໄດ້ຂາບທູນພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະນາມວ່າສິຂີ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍ່ອມຮູ້ ຂ້າພຣະອົງເປັນຜູ້ກ່າວວາຈາປານນີ້ ໃນທ່າມກາງພິກຂຸສົງວ່າ ທ່ານຜູ້ມີອາຍຸທັງຫຼາຍ ເຮົາຢູ່ທີ່ພົມມະໂລກສາມາດຍັງໝື່ນໂລກກະທາດໃຫ້ຮູ້ແຈ້ງດ້ວຍສຽງໄດ້

ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຕັດວ່າ ພາມເປັນການຂອງທ່ານ ພາມ ເປັນການຂອງທ່ານແລ້ວທີ່ທ່ານຢືນຢູ່ທີ່ພົມມະໂລກເພື່ອຍັງໝື່ນໂລກກະທາດໃຫ້ຮູ້ແຈ້ງດ້ວຍສຽງໄດ້

ອະພິພູພິກຂຸທູນຮັບສະໜອງ ພຣະດຳຣັດແລ້ວ ຢືນຢູ່ໃນພົມມະໂລກ ໄດ້ກ່າວຄາຖາເຫຼົ່ານີ້ວ່າ

ທ່ານທັງຫຼາຍຈົ່ງຜາຣົບຄວາມພຽນ
ຈົ່ງທຳຄວາມພຽນຢ່າຢຸດ
ຈົ່ງປະກອບຄວາມພຽນໃນພຣະພຸດທະສາດສະໜາ
ຈົ່ງກຳຈັດກອງທັບແຫ່ງມັດຈຸ
ຄືຊ້າງກຳຈັດເຮືອນຕົ້ນອໍ້ ສັນນັ້ນ
ຜູ້ທີ່ບໍ່ຜະໝາດຢູ່ໃນພຣະທຳວິໄນນີ້
ລະການວຽນວ່າຍຕາຍເກີດແລ້ວ ຈັກທຳທີ່ສຸດແຫ່ງທຸກໄດ້

ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີແລະອະພິພູພິກຂຸ ຍັງພົມ ພົມບໍລິສັດ ແລະພົມປາຣິສັດຊະທັງຫຼາຍໃຫ້ສະຫຼົດໃຈແລ້ວ ໄດ້ຫາຍໂຕຈາກພົມມະໂລກນັ້ນ ໄປຜາກົດໃນອະຣຸນວະດີຣາດຊະທານີ ໗ລ໗ ຄັ້ງນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ເມື່ອອະພິພູພິກຂຸຢືນຢູ່ໃນພົມມະໂລກ ກ່າວຄາຖາທັງຫຼາຍຢູ່ ທ່ານທັງຫຼາຍໄດ້ຍິນບໍ?

ພິກຂຸທັງຫຼາຍຂາບທູນວ່າ ເມື່ອອະພິພູພິກຂຸຢູ່ໃນພົມມະໂລກ ກ່າວຄາຖາທັງຫຼາຍຢູ່ ຂ້າ

ພຣະອົງທັງຫຼາຍໄດ້ຍິນແລ້ວ ຂ້ານ້ອຍ

ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຕັດຖາມວ່າ ພິກຂຸ ທັງຫຼາຍ ກໍເມື່ອອະພິພູພິກຂຸຢືນຢູ່ໃນພົມມະໂລກ ກ່າວຄາຖາທັງຫຼາຍຢູ່ ທ່ານທັງຫຼາຍໄດ້ຍິນວ່າແນວໃດ?

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອອະພິພູພິກຂຸຢືນຢູ່ໃນ ພົມມະໂລກ ກ່າວຄາຖາທັງຫຼາຍຢູ່ ຂ້າພຣະອົງທັງຫຼາຍໄດ້ຍິນແນວນີ້ ວ່າ

ທ່ານທັງຫຼາຍ ຈົ່ງຜາຣົບຄວາມພຽນ
ຈົ່ງທຳຄວາມພຽນຢ່າຢຸດ
ຈົ່ງປະກອບຄວາມພຽນໃນພຣະພຸດທະສາດສະໜາ
ຈົ່ງກຳຈັດກອງທັບແຫ່ງມັດຈຸ
ຄືຊ້າງກຳຈັດເຮືອນຕົ້ນອໍ້ ສັນນັ້ນ
ຜູ້ທີ່ບໍ່ຜະໝາດຢູ່ໃນພຣະທຳວິໄນນີ້
ລະການວຽນວ່າຍຕາຍເກີດແລ້ວ ຈັກກະທຳທີ່ສຸດແຫ່ງທຸກໄດ້

ເມື່ອອະພິພູພິກຂຸຢືນກ່າວຄາຖາທັງຫຼາຍຢູ່ໃນພົມມະໂລກ ຂ້າພຣະອົງທັງຫຼາຍໄດ້ຍິນແລ້ວແນວນີ້

ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ ຕັດວ່າ ດີແລ້ວ ດີແລ້ວ ພິກຂຸທັງຫຼາຍ ດີຫຼາຍ ພິກຂຸທັງຫຼາຍ ເມື່ອອະພິພູພິກຂຸຢືນກ່າວຄາຖາທັງຫຼາຍຢູ່ໃນພົມມະໂລກ ທ່ານທັງຫຼາຍໄດ້ຍິນແລ້ວ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຸດທະພົດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ອະຣຸນະວະຕີສູດທີ ໔ ຈົບ**

# ໕. ປະຣິນິບພານສູດ

## ວ່າດ້ວຍການປະຣິນິບພານ

[໑໙໘] ສະໄໝໜຶ່ງ ໃນເວລາໃກ້ປະຣິນິບພານ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ລະຫວ່າງຕົ້ນໄມ້ສາລະທັງຄູ່ ປ່າສາລະວັນ ສະຖານທີ່ແວພັກຂອງມັນລະກະສັດທັງຫຼາຍ ເຂດນະຄອນ ກຸ

ຊິນາຣາ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ບັດນີ້ ເຮົາຂໍເຕືອນພວກທ່ານວ່າ ສັງຂານທັງຫຼາຍ ມີຄວາມເສື່ອມໄປເປັນທຳມະດາ ພວກທ່ານຈົ່ງເຮັດໜ້າທີ່ໃຫ້ສົມບູນດ້ວຍຄວາມບໍ່ຜະໝາດເທີ້ນ ນີ້ເປັນພຣະອາຈາຄັ້ງສຸດທ້າຍຂອງພຣະຕະຖາຄົດ ຕໍ່ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ

ຊົງເຂົ້າປະຖົມຊານ ອອກຈາກປະຖົມຊານ
ຊົງເຂົ້າທຸຕິຍະຊານ ອອກຈາກທຸຕິຍະຊານ
ຊົງເຂົ້າຕະຕິຍະຊານ ອອກຈາກຕະຕິຍະຊານ
ຊົງເຂົ້າຈະຕຸດຖະຊານ ອອກຈາກຈະຕຸດຖະຊານ
ຊົງເຂົ້າອາກາສານັນຈາຍະຕະນະສະມາບັດ ฯลฯ
ຊົງເຂົ້າວິນຍານັນຈາຍະຕະນະສະມາບັດ ฯลฯ
ບັດຊົງເຂົ້າອາກິນຈັນຍາຍະຕະນະສະມາບັດ ฯลฯ
ຊົງເຂົ້າເນວະສັນຍານາສັນຍາຍະຕະນະສະມາບັດ ฯลฯ
ຊົງເຂົ້າສັນຍາເວທະຍິຕະນິໂຣດ ฯลฯ
ຊົງເຂົ້າເນວະສັນຍານາສັນຍາຍະຕະນະສະມາບັດ ฯลฯ
ຊົງເຂົ້າອາກິນຈັນຍາຍະຕະນະສະມາບັດ ฯลฯ
ຊົງເຂົ້າວິນຍານັນຈາຍະຕະນະສະມາບັດ ฯลฯ
ຊົງເຂົ້າອາກາສານັນຈາຍະຕະນະສະມາບັດ ฯลฯ
ຊົງເຂົ້າຈະຕຸດຖະຊານ ອອກຈາກຈະຕຸດຖະຊານ
ຊົງເຂົ້າຕະຕິຍະຊານ ອອກຈາກຕະຕິຍະຊານ
ຊົງເຂົ້າທຸຕິຍະຊານ ອອກຈາກທຸຕິຍະຊານ
ຊົງເຂົ້າປະຖົມຊານ ອອກຈາກປະຖົມຊານ
ຊົງເຂົ້າທຸຕິຍະຊານ ອອກຈາກທຸຕິຍະຊານ
ຊົງເຂົ້າຕະຕິຍະຊານ ອອກຈາກຕະຕິຍະຊານ
ຊົງເຂົ້າຈະຕຸດຖະຊານ ອອກຈາກຈະຕຸດຖະຊານແລ້ວ ໄດ້ປະຣິນິບພານຕາມລຳດັບ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດປະຣິນິບພານ ທ້າວສະຫໍາບໍດີພົມໄດ້ກ່າວຄາຖາພ້ອມກັບ ການສະເດັດປະຣິນິບພານ ວ່າ

ສັບພະສັດຈະຕ້ອງປະຖິ້ມຮ່າງກາຍໄວ້ໃນໂລກ
ພຣະສາດສະດາຜູ້ຫາໃຜປຽບທຽບບໍ່ໄດ້ໃນໂລກ
ຜູ້ເຂົ້າເຖິງສະພາວະຕາມເປັນຈິງ ຜູ້ບັນລຸພົນທຳ໑
ຜູ້ຕັດສະຣູ້ເອງໂດຍຖືກຕ້ອງແນວນີ້ ກໍຍັງສະເດັດປະຣິນິບພານໄດ້

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດປະຣິນິບພານ ທ້າວສັກກະຈອມເທບໄດ້ຕັດຄາຖາ ພ້ອມກັບ ການສະເດັດປະຣິນິບພານ ວ່າ

ສັງຂານທັງຫຼາຍລ້ວນບໍ່ທ່ຽງ
ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ
ເກີດຂຶ້ນແລ້ວຍ່ອມດັບໄປ
ຄວາມສະງົບລະງັບສັງຂານເຫຼົ່ານັ້ນເປັນຄວາມສຸກ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດປະຣິນິບພານ ທ່ານພຣະອານົນໄດ້ກ່າວຄາຖາ ພ້ອມກັບການສະເດັດປະຣິນິບພານ ວ່າ

ເມື່ອພຣະສຳມາສຳພຸດທະເຈົ້າ
ມີພຣະອາການອັນລ້ຳເລີດທຸກຢ່າງ໌ສະເດັດປະຣິນິບພານແລ້ວ
ໃນການນັ້ນ ໄດ້ເກີດເຫດໜ້າອັດສະຈັນ ຂົນຫົວລຸກ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດປະຣິນິບພານ ທ່ານພຣະອະນຸຣຸດທະໄດ້ກ່າວຄາຖາ ພ້ອມກັບ ການສະເດັດປະຣິນິບພານ ວ່າ

ລົມຫັນໃຈເຂົ້າ ລົມຫັນໃຈອອກ
ຂອງພຣະຜູ້ມີພຣະພາກເຈົ້າຜູ້ມີພຣະທະໄທໝັ້ນຄົງ ຜູ້ໝັ້ນຄົງ ບໍ່ມີແລ້ວ
ພຣະມຸນີຜູ້ບໍ່ຫວັ່ນໄຫວ ມຸ້ງໃຝ່ສັນຕິ໌
ມີພຣະຈັກຂຸ ສະເດັດປະຣິນິບພານແລ້ວ
ພຣະອົງຜູ້ມີພຣະທະໄທ ບໍ່ຫົດຫູ່
ຊົງອົດກັ້ນເວທະນາໄວ້ໄດ້ ມີພຣະທະໄທລຸດພົ້ນແລ້ວ
ຄືດວງປະທີບທີ່ຮຸ່ງສະຫວ່າງແຈ້ງດັບໄປ ສັນນັ້ນ໌

**ປະຣິນິບພານສູດທີ່ ໕ ຈົບ**

**ວັກທີ ໔ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ສະນັງກຸມາຣະສູດ
໒. ອັນທະກະວິນທະສູດ
໓. ປະຣິນິບພານສູດ
໔. ເທວະທັດຕະສູດ
໕. ອະຣຸນະວະຕີສູດ

### ພົມສັງຍຸດ ຈົບບໍລິບູນ

## ລວມພຣະສູດທີ່ ມີໃນສັງຍຸດນີ້ ຄື

໑. ພົມມາຍາຈະນະສູດ
໒. ພົມເທວະສູດ
໓. ອຸປະຣາທິດຖິສູດ
໔. ໂກກາລິກະສູດ
໕. ຕຸທຸພົມສູດ
໖. ສະນັງກຸມາຣະສູດ
໗. ອັນທະກະວິນທະສູດ
໘. ປະຣິນິບພານສູດ
໙. ຄາຣະວະສູດ
໑໐. ພະກະສູດ
໑໑. ປະມາທະສູດ
໑໒. ກະຕະໂມຣະກະຕິດສະກະສູດ
໑໓. ໂກກາລິກະສູດ
໑໔. ເທວະທັດຕະສູດ
໑໕. ອະຣຸນະວະຕີສູດ

# ໗. ພາມມະນະສັງຍຸດ

# ໑. ອະຣະຫັນຕະວັກ

### ໝວດວ່າດ້ວຍພຣະອະຣະຫັນ

## ໑. ທະນັນຊານີສູດ

### ວ່າດ້ວຍທະນັນຊານີພາມມະນີ

[໑໗໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ນາງພາມມະນີຊື່ທະນັນຊານີ ຂອງພາມພາຣະທະວາຊະໂຄດຄົນໜຶ່ງ ເປັນຜູ້ເຫຼື້ອມໃສຢ່າງຍິ່ງໃນພຣະພຸດທະເຈົ້າ ພຣະທຳແລະພຣະສົງ ຄັ້ງນັ້ນ ນາງທະນັນຊານີພາມມະນີ ກຳລັງນຳພັດເຂົ້າໄປເພື່ອພາມພາຣະທະວາຊະໂຄດ ຍ່າງກ້າວພາດຈຶ່ງເປ່ງອຸທານ ໓ ຄັ້ງວ່າ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ
ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ
ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ເມື່ອນາງທະນັນຊານີພາມມະນີກ່າວແນວນີ້ແລ້ວ ພາມພາຣະທະວາຊະໂຄດໄດ້ກ່າວກັບນາງທະນັນຊານີພາມມະນີດັ່ງນີ້ວ່າ ກໍຍິງຖ່ອຍຄົນນີ້ ກ່າວຄຸນຂອງສະມະນະຫົວໂລ້ນແນວນີ້ແນວນັ້ນ ບໍ່ວ່າຢູ່ບ່ອນໃດ ຍິງຖ່ອຍ ບັດນີ້ ເຮົາຈັກຍົກວາທະຂອງພຣະສາດສະດາຂອງເຈົ້າລອງເບິ່ງ

ນາງທະນັນຊານີພາມມະນີກ່າວວ່າ ພາມ ຂ້ອຍຍັງແນມບໍ່ເຫັນບຸກຄົນຜູ້ຈະເພິ່ງຍົກວາທະຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນໄດ້ເລີຍ ບໍ່ວ່າໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ທ່ານຈົ່ງໄປລອງເບິ່ງເທີ້ນ ໄປແລ້ວກໍຈັກຮູ້ເອງ

ຄັ້ງນັ້ນ ພາມພາຣະທະວາຊະໂຄດໂກດ ບໍ່ພໍໃຈ ຈຶ່ງເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່

ສົມຄວນ ໄດ້ກ່າວກັບພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ບຸກຄົນກຳຈັດອັນໃດ? ໄດ້ຈຶ່ງຢູ່ເປັນສຸກ
ກຳຈັດອັນໃດ? ໄດ້ຈຶ່ງບໍ່ເສົ້າໂສກ
ຂ້າແດ່ ພຣະໂຄດົມ
ພຣະອົງຊົງພໍພຣະຫະໄທການກຳຈັດທຳແນວໜຶ່ງ ຄື ທຳໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນກຳຈັດຄວາມໂກດໄດ້ຈຶ່ງຢູ່ເປັນສຸກ
ກຳຈັດຄວາມໂກດໄດ້ຈຶ່ງບໍ່ເສົ້າໂສກ
ພາມ ພຣະອະຣິຍະທັງຫຼາຍ ສັນເສີນການກຳຈັດຄວາມໂກດ
ເຊິ່ງມີຮາກເປັນພິດ ມີຍອດຫວານ
ຍ້ອນບຸກຄົນກຳຈັດຄວາມໂກດນັ້ນໄດ້ແລ້ວ ຈຶ່ງບໍ່ເສົ້າໂສກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມພາຣະທະວາຊະໂຄດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະໂຄດົມຜູ້ຈະເລີນ ຊົງປະກາດທຳໂດຍປະຣິຍາຍເປັນຈຳນວນຫຼາຍ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຄົນຫລົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ສັນນັ້ນ ຂ້າພຣະອົງນີ້ ຂໍເຖິງພຣະໂຄດົມຜູ້ຈະເລີນ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະໂຄດົມຜູ້ຈະເລີນດ້ວຍເທີ້ນ

ພາມພາຣະທະວາຊະໂຄດ ໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ແລະ ເມື່ອທ່ານພຣະພາຣະທະວາຊະອຸປະສົມບົດແລ້ວບໍ່ດົນ ໄດ້ຫຼີກອອກໄປຢູ່ຄົນດຽວບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຕ້ອງການດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ເປັນອັນວ່າ ທ່ານພຣະພາຣະທະວາຊະ ໄດ້ເປັນພຣະອະຣະຫັນຮູບໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ທະນັນຊານີສູດທີ ໑ ຈົບ**

# ໘. ອັກໂກສະສູດ

## ວ່າດ້ວຍອັກໂກສະກະພາຣະທະວາຊະພາມ

[໑໙໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ອັກໂກສະກະພາຣະທະວາຊະພາມໄດ້ສະດັບມາວ່າ ໄດ້ຂ່າວວ່າພາມພາຣະທະວາຊະໂຄດ ອອກຈາກເຮືອນບວດເປັນບັນພະຊິດ ໃນສຳນັກຂອງພຣະສະມະໜະໂຄດົມແລ້ວ ຈຶ່ງໂກດ ບໍ່ພໍໃຈ ເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ດ່າຕຳໜິພຣະຜູ້ມີພຣະພາກເຈົ້າດ້ວຍວາຈາຫຍາບຄາຍ ອັນບໍ່ແມ່ນວາຈາຂອງສັດຕະບຸຣຸດ

ເມື່ອອັກໂກສະກະພາຣະທະວາຊະພາມກ່າວແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມ ອັກໂກສະກະພາຣະທະວາຊະພາມດັ່ງນີ້ວ່າ ພາມ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ມິດອຳມາດ[໓] ຍາດແລະສາຍໂລຫິດ[໔] ຜູ້ເປັນແຂກຂອງທ່ານ ມາຢ້ຽມຢາມທ່ານແດ່ບໍ?

ອັກໂກສະກະພາຣະທະວາຊະພາມຕອບວ່າ ພຣະໂຄດົມຜູ້ຈະເລີນ ມິດ ອຳມາດ ຍາດແລະສາຍໂລຫິດ ຜູ້ເປັນແຂກຂອງຂ້າພຣະອົງ ມາຢ້ຽມຢາມແດ່ເປັນບາງເວລາ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພາມ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ທ່ານເຄີຍຈັດຂອງຫຍໍ້າຂອງບໍຣິໂພກ ຫຼື ຂອງຄວນກິນ ເພື່ອຕ້ອນຮັບມິດ ອຳມາດ ຍາດແລະສາຍໂລຫິດ ຜູ້ເປັນແຂກເຫຼົ່ານັ້ນແດ່ບໍ?

ອັກໂກສະກະພາຣະທະວາຊະພາມຕອບວ່າ ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງຈັດຂອງຫຍໍ້າຂອງບໍຣິໂພກ ຫຼື ຂອງຄວນກິນ ເພື່ອຕ້ອນຮັບມິດ ອຳມາດ ຍາດແລະສາຍໂລຫິດ ຜູ້ເປັນແຂກເຫຼົ່ານັ້ນເປັນບາງເວລາ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພາມ ຖ້າມິດ ອຳມາດ ຍາດແລະສາຍໂລຫິດ ຜູ້ເປັນແຂກເຫຼົ່ານັ້ນ ບໍ່ຮັບຂອງຫຍໍ້າ ຂອງບໍຣິໂພກ ຫຼື ຂອງຄວນກິນນັ້ນ ຈະເປັນຂອງໃຜ?

ອັກໂກສະກະພາຣະທະວາຊະພາມຕອບວ່າ ພຣະໂຄດົມຜູ້ຈະເລີນ ຖ້າມິດ ອຳມາດຍາດແລະສາໂລຫິດຜູ້ເປັນແຂກເຫຼົ່ານັ້ນບໍ່ຮັບ ຂອງຫຍໍ້າ ຂອງບໍຣິໂພກ ຫຼື ຂອງຄວນກິນນັ້ນ ກໍເປັນຂອງຂ້າພຣະອົງຄືເກົ່າ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພາມ ຂໍ້ນີ້ກໍຄືກັນ ທ່ານດ່າເຮົາຜູ້ບໍ່ດ່າຢູ່ ທ່ານໂກດຕໍ່ເຮົາຜູ້ບໍ່ໂກດຢູ່ ທ່ານມາຜິດຖຽງກັບເຮົາຜູ້ບໍ່ຜິດຖຽງຢູ່ ເຮົາບໍ່ຮັບຄຳດ່າເປັນຕົ້ນຂອງທ່ານນັ້ນ ພາມດັ່ງນັ້ນ ຄຳດ່າເປັນຕົ້ນນັ້ນ ຈຶ່ງເປັນຂອງທ່ານຜູ້ດຽວ

ພາມ ຜູ້ໃດດ່າຕອບຕໍ່ບຸກຄົນຜູ້ດ່າຢູ່ ໂກດຕອບຕໍ່ບຸກຄົນຜູ້ໂກດຢູ່ ຜິດຖຽງຕອບຕໍ່ບຸກຄົນຜູ້ຜິດຖຽງຢູ່ ຜູ້ນັ້ນເຮົາກ່າວວ່າ ຍ່ອມບໍຣິໂພກນຳກັນ ຍ່ອມກະທຳຕອບໂຕ້ຕໍ່ກັນ ແຕ່ເຮົານັ້ນບໍ່ບໍຣິໂພກນຳກັນ ບໍ່ກະທຳຕອບໂຕ້ກັບທ່ານເປັນອັນຂາດ ພາມ ດັ່ງນັ້ນ ຄຳດ່າເປັນຕົ້ນນັ້ນ ຈຶ່ງເປັນຂອງທ່ານຜູ້ດຽວ

ອັກໂກສະກະພາຣະທະວາຊະພາມກ່າວ ວ່າ ບໍລິສັດພ້ອມດ້ວຍພຣະຣາຊາ ຍ່ອມຮູ້ພຣະໂຄດົມຜູ້ຈະເລີນແນວນີ້ວ່າ ພຣະສະມະນະໂຄດົມ ເປັນພຣະອະຣະຫັນ ກໍເມື່ອເປັນເຊັ່ນນັ້ນພຣະໂຄດົມຜູ້ຈະເລີນຍັງມີຄວາມໂກດຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

> ບຸກຄົນຜູ້ບໍ່ໂກດ ເຝິກຕົນແລ້ວ
> ມີຄວາມເປັນຢູ່ຢ່າງສະໝ່ຳສະເໝີ ລຸດພົ້ນແລ້ວຍ້ອນຮູ້ຖືກ
> ສະງົບ ໝັ້ນຄົງ ຈັກມີຄວາມໂກດມາແຕ່ໄສໄດ້ນໍ
> ຜູ້ໃດໂກດຕອບຕໍ່ບຸກຄົນຜູ້ໂກດ
> ຜູ້ນັ້ນຍ່ອມຊົ່ວກວ່າຜູ້ໂກດ ຍ້ອນການໂກດຕອບນັ້ນ
> ບຸກຄົນຜູ້ບໍ່ໂກດຕອບຕໍ່ບຸກຄົນຜູ້ໂກດ
> ຊື່ວ່າຊະນະສົງຄາມທີ່ຊະນະໄດ້ຍາກ
>
> ຜູ້ໃດຮູ້ວ່າຜູ້ອື່ນໂກດ ເປັນຜູ້ມີສະຕິ ສະງົບໃຈໄວ້ໄດ້
> ຜູ້ນັ້ນຊື່ວ່າ ປະພຶດປະໂຫຍດຂອງຄົນທັງ ໒ ຝ່າຍ
> ຄືຝ່າຍຕົນແລະຝ່າຍຜູ້ອື່ນ
>
> ເມື່ອຜູ້ນັ້ນຖືຮັກສາປະໂຫຍດຂອງຄົນທັງ ໒ ຝ່າຍໆ
> ຄືຝ່າຍຕົນແລະຝ່າຍຜູ້ອື່ນ
> ຊົນທັງຫຼາຍຜູ້ບໍ່ສະຫຼາດໃນທຳ໌ຍ່ອມເຂົ້າໃຈວ່າເປັນຄົນໂງ່

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອັກໂກສະກະພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າພຣະອົງນີ້ ຂໍເຖິງພຣະໂຄດົມຜູ້ຈະເລີນ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະໂຄດົມຜູ້ຈະເລີນດ້ວຍເທີ້ນ

ອັກໂກສະກະພາຣະທະວາຊະພາມ ໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະຜູ້ມີ

ພຣະພາກແລ້ວ ອັນໜຶ່ງ ທ່ານພຣະອັກໂກສະກະພາຣະທະວາຊະອຸປະສົມບົດແລ້ວບໍ່ດົນ ຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ

ເປັນອັນວ່າ ທ່ານພຣະອັກໂກສະກະພາຣະທະວາຊະ ໄດ້ເປັນພຣະອະຣະຫັນຮູບໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອັກໂກສະສູດທີ ໘ ຈົບ**

## ໙. ອະສຸຣິນທະກະສູດ

### ວ່າດ້ວຍອະສຸຣິນທະກະພາມ

[໑໘໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ອະສຸລິນທິກພາຣະທະວາຊະພາມໄດ້ສະດັບມາວ່າ ໄດ້ຂ່າວວ່າພາມພາຣະທະວາຊະໂຄດ ອອກຈາກເຮືອນບວດເປັນບັນພະຊິດ ໃນສຳນັກຂອງພຣະສະມະນະໂຄດົມແລ້ວ ຈຶ່ງໂກດ ບໍ່ພໍໃຈ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ດ່າ ຕຳໜິພຣະຜູ້ມີພຣະພາກເຈົ້າດ້ວຍວາຈາຫຍາບຄາຍ ອັນບໍ່ແມ່ນວາຈາຂອງສັດຕະບຸຣຸດ ເມື່ອອະສຸລິນທະກະພາຣະທະວາຊະພາມ ກ່າວແບບນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊີງມິດຢູ່ ລຳດັບນັ້ນອະສຸລິນທະກະພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ພຣະສະມະນະເຮົາຊະນະທ່ານແລ້ວ ພຣະສະມະນະ ເຮົາຊະນະທ່ານແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຊົນພານກ່າວວາຈາຫຍາບຄາຍ ຍ່ອມເຂົ້າໃຈວ່າຕົນເອງຊະນະ
ແຕ່ຄວາມອົດກັ້ນໄດ້ເປັນຄວາມຊະນະຂອງບັນດິດຜູ້ຮູ້ແຈ້ງ
ຜູ້ໃດໂກດຕອບຕໍ່ບຸກຄົນຜູ້ໂກດ
ຜູ້ນັ້ນຍ່ອມຊົ່ວກວ່າຜູ້ໂກດ ຍ້ອນການໂກດຕອບນັ້ນ
ບຸກຄົນຜູ້ບໍ່ໂກດຕອບຕໍ່ບຸກຄົນຜູ້ໂກດ
ຊື່ວ່າຊະນະສົງຄາມທີ່ຊະນະໄດ້ຍາກ

ຜູ້ໃດຮູ້ວ່າຜູ້ອື່ນໂກດ ເປັນຜູ້ມີສະຕິ ສະງົບໃຈໄວ້ໄດ້
ຜູ້ນັ້ນຊື່ວ່າປະພຶດປະໂຫຍດຂອງຄົນທັງ ໒ ຝ່າຍ
ຄືຝ່າຍຕົນແລະຝ່າຍຜູ້ອື່ນ

ເມື່ອຜູ້ນັ້ນຖືຮັກສາປະໂຫຍດຂອງຄົນທັງ ໒ ຝ່າຍ
ຄືຝ່າຍຕົນແລະຝ່າຍຜູ້ອື່ນ
ຊົນທັງຫຼາຍຜູ້ບໍ່ສະຫຼາດໃນທຳຍ່ອມເຂົ້າໃຈວ່າເປັນຄົນໂງ່

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອະສຸລິນທະກະພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ

ເປັນອັນວ່າ ທ່ານພຣະອະສຸລິນທະກະພາຣະທະວາຊະ ໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ອະສຸຣິນທະກະສູດທີ ໓ ຈົບ**

# ໔. ພິລັງຄິກະສູດ

## ວ່າດ້ວຍພິລັງຄິກະພາມ

[໑໙໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ພິລັງຄິກະພາຣະທະວາຊະພາມໄດ້ສະດັບມາວ່າ ໄດ້ຂ່າວວ່າພາມພາຣະທະວາຊະໂຄດອອກຈາກເຮືອນບວດເປັນບັນພະຊິດ ໃນສຳນັກຂອງພຣະສະມະນະໂຄດົມ ຈຶ່ງໂກດ ບໍ່ພໍໃຈ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ຢືນນິດຢູ່ບ່ອນທີ່ສົມຄວນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄວາມຄິດຄຳນຶງຂອງພິລັງຄິກະພາຣະທະວາຊະພາມດ້ວຍພຣະທະໄທແລ້ວ ໄດ້ຕັດກັບພິລັງຄິກະພາຣະທະວາຊະພາມດ້ວຍພຣະຄາຖາ ວ່າ

ຜູ້ໃດປະທຸດສະຮ້າຍຕໍ່ບຸກຄົນຜູ້ບໍ່ປະທຸດສະຮ້າຍ
ເຊິ່ງເປັນຜູ້ບໍລິສຸດ ບໍ່ມີກິເລດພຽງດັ່ງເນີນ
ບາບຍ່ອມກັບມາເຖິງບຸກຄົນນັ້ນເຊິ່ງເປັນຄົນພານຢ່າງແນ່ນອນ
ຄືຝຸ່ນທຸລີອັນລະອຽດທີ່ບຸກຄົນຊັດໄປທວນລົມແລ້ວ ສັນນັ້ນ[໑]

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິລັງຄິກະພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂ້າພຣະອົງນີ້ຂໍເຖິງພຣະໂຄດົມຜູ້ຈະເລີນ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະໂຄດົມຜູ້ຈະເລີນເທີ້ນ

ພິລັງຄິກພາຣະທະວາຊະພາມໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ໆລໆ ກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ເປັນອັນວ່າ ທ່ານພຣະພິລັງຄິກະພາຣະທະວາຊະ ໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ພິລັງຄິກະສູດທີ ໔ ຈົບ**

# ໕. ອະຫິງສະກະສູດ

## ວ່າດ້ວຍອະຫິງສະກະພາຣະທະວາຊະພາມ

[໑໘໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ອະຫິງສະກະພາຣະທະວາຊະພາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງຊື່ອະຫິງສະກະ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງຊື່ອະຫິງສະກະ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຖ້າທ່ານຊື່ອະຫິງສະກະ ທ່ານກໍບໍ່ຄວນບຽດບຽນຜູ້ອື່ນ
ຜູ້ໃດບໍ່ບຽດບຽນຜູ້ອື່ນ ທາງກາຍ ທາງວາຈາ ແລະ ທາງໃຈ
ຜູ້ນັ້ນຈຶ່ງຈະຊື່ອະຫິງສະກະສົມຊື່

ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດແນວນີ້ແລ້ວ ອະຫິງສະກະພາຣະທະວາຊະພາມໄດ້ຂາບ

ທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ

ເປັນອັນວ່າ ທ່ານພຣະອະຫິງສະກະພາຣະທະວາຊະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ອະຫິງສະກະສູດທີ ໕ ຈົບ**

## ໖. ຊະຕາສູດ

### ວ່າດ້ວຍຊະຕາພາມ

[໑໗໘] ເລື້ອງເກີດຂື້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ຊະຕາພາຣະທະວາຊະພາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ໝູ່ສັດຫຍຸ້ງທັງພາຍໃນ ຫຍຸ້ງທັງພາຍນອກ
ຖືກຄວາມຫຍຸ້ງພາໃຫ້ນຸງນັງແລ້ວ
ຂ້າແດ່ ພຣະໂຄດົມ
ຍ້ອນແນວນັ້ນ ຂ້າພຣະອົງຂໍທູນຖາມພຣະອົງ ວ່າ
ໃຜເພິ່ງແກ້ຄວາມຫຍຸ້ງນີ້ໄດ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ນໍຣະຊົນຜູ້ມີປັນຍາ ດຳລົງຢູ່ໃນສິນແລ້ວ
ຈະເລີນຈິດແລະປັນຍາຢູ່ ມີຄວາມພຽນ
ມີປັນຍາເຄື່ອງບໍລິຫານ ເຫັນໄພໃນສັງສາຣະວັດ
ເພິ່ງແກ້ຄວາມຫຍຸ້ງນີ້ໄດ້

ບຸກຄົນເຫຼົ່າໃດກຳຈັດຣາຄະ ໂທສະ ແລະ ອະວິດຊາໄດ້ແລ້ວ
ບຸກຄົນເຫຼົ່ານັ້ນ ສິ້ນອາສະວະແລ້ວ ເປັນພຣະອະຣະຫັນ
ພວກເຂົາແກ້ຄວາມຫຍຸ້ງໄດ້ແລ້ວ
ນາມກໍດີ ຣູບກໍດີ ປະຕິຄະສັນຍາກໍດີ

ຮູບສັນຍາກໍດີ ດັບບໍ່ເຫຼືອໃນບ່ອນໃດ
ຄວາມຫຍຸ້ງນັ້ນກໍຍ່ອມຂາດຫາຍໄປໃນບ່ອນນັ້ນ[໑]

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ຊະຕາພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ

ເປັນອັນວ່າ ທ່ານພຣະຊຕາພາຣະທະວາຊະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ຊະຕາສູດທີ ໖ ຈົບ**

# ໗. ສຸດທິກະສູດ

## ວ່າດ້ວຍສຸດທິກະພາຣະທະວາຊະພາມ

[໑໘໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ສຸດທິກະພາຣະທະວາຊະພາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່ າ

ພາມລາງຄົນໃນໂລກແມ່ນເປັນຜູ້ມີສິນ
ພໍ່າເພັງຕະບະຢູ່ ກໍຍັງມົດຈົດບໍ່ໄດ້
ພາມຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະທໍ່ນັ້ນ
ຈຶ່ງຈະມົດຈົດໄດ້
ສ່ວນໝູ່ສັດອື່ນນອກຈາກນີ້ຈະມົດຈົດບໍ່ໄດ້ເລີຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພາມ ທ່ານຈົ່ງຮູ້ແນວນີ້ວ່າ
ບຸກຄົນເຖິງຈະເປັນພາມໂດຍກຳເນີດ
ສາທະຍາຍມົນເປັນຈຳນວນຫຼາຍ ແຕ່ເປັນຜູ້ເນົ່າແລະສົກກະປົກພາຍໃນ
ອາໄສການຕົວະລ້ຽງຊີບ ບໍ່ຈັດວ່າເປັນພາມ

ສ່ວນກະສັດ ພາມ ແພດ ສູດ ຄົນຈັນທານ

ແລະຄົນຖອກຂີ້ເຫຍື່ອ ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຢູ່
ມີຄວາມບາກບັ່ນຢູ່ປະຈຳ ຍ່ອມເຖິງຄວາມມິດຈິດຢ່າງຍິ່ງໄດ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສຸດທິກະພາຣະທະວາຊະພາມໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ

ເປັນອັນວ່າ ທ່ານພຣະສຸດທິກະພາຣະທະວາຊະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ສຸດທິກະສູດທີ ໗ ຈົບ**

# ໘. ອັກຄິກະສູດ

## ວ່າດ້ວຍອັກຄິກະພາມ

[໑໙໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ອັກຄິກະພາຣະທະວາຊະພາມປຸງເຂົ້າປາຍາດ ດ້ວຍເນີຍໃສດ້ວຍຄິດວ່າ ເຮົາຈັກບູຊາໄຟ ຈັກປົນເປີການບູຊາໄຟ

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນເມືອງຣາດຊະຄຶ ສະເດັດໄປບິນທະບາດຕາມລຳດັບຮ່ອມ ເຂົ້າໄປຮອດບ່ອນຢູ່ຂອງ ອັກຄິກະພາຣະທະວາຊະພາມ ແລ້ວໄດ້ປະທັບຢືນຢູ່ບ່ອນທີ່ສົມຄວນ

ອັກຄິກະພາຣະທະວາຊະພາມ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບຢືນບິນທະບາດຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ບຸກຄົນຜູ້ເປັນພາມໂດຍກຳເນີດ
ຈົບໄຕຣເພດ[໑]ເປັນພະຫູສູດ
ພາມຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະນັ້ນ
ຈຶ່ງຄວນບໍຣິໂພກເຂົ້າປາຍາດນີ້

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ບຸກຄົນເຖິງຈະເປັນພາມໂດຍກຳເນີດ
ສາທະຍາຍມົນເປັນຈຳນວນຫຼາຍ ແຕ່ເປັນຜູ້ເນົ່າແລະສົກກະປົກພາຍໃນ

ເປັນຜູ້ຮ້ອມລ້ອມໄປດ້ວຍການຕົວະ ບໍ່ຈັດວ່າເປັນພາມ
ມຸນີຜູ້ບັນລຸອະພິນຍາ ຄື ຮູ້ປຸບເພນິວາສະຍານຢ່າງແຈ້ງຊັດ
ເຫັນສະຫວັນແລະອະບາຍ ທັງບັນລຸຄວາມສິ້ນຊາດ໌ແລ້ວ
ຍ້ອນວິດຊາ ໓ ເຫຼົ່ານີ້ ຈຶ່ງເປັນພາມຜູ້ຈົບໄຕຣເພດ
ມຸນີຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະທ່ານັ້ນ ຈຶ່ງຄວນບໍຣິໂພກເຂົ້າປາຍາດນີ້

ອັກຄິກະພາຣະທະວາຊະພາມ ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ພຣະໂຄດົມຜູ້ຈະເລີນ ຂໍເຊີນ ບໍຣິໂພກເທີ້ນ ພຣະອົງເປັນພາມ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ການທີ່ເຮົາກ່າວຄາຖາບໍ່ແມ່ນເພື່ອອາຫານ
ພາມ ນີ້ບໍ່ແມ່ນທຳນຽມຂອງຜູ້ເຫັນທຳ
ພຣະພຸດທະເຈົ້າທັງຫຼາຍ ບໍ່ຮັບອາຫານທີ່ໄດ້ມາຍ້ອນການກ່າວຄາຖາ

ພາມ ເມື່ອທຳນຽມມີຢູ່ ຈຶ່ງມີການປະພຶດແນວນີ້
ທ່ານຈົ່ງບຳລຸງດ້ວຍເຂົ້າແລະນ້ຳ ແລະດ້ວຍປັດໄຈອື່ນ
ແກ່ພຣະຂີນາສົບ ຜູ້ປະກອບດ້ວຍຄຸນທັງປວງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ມີຄວາມຄະນອງອັນສະງົບແລ້ວ
ຍ້ອນສາດສະໜານັ້ນເປັນເຂດບຸນຂອງຜູ້ສະແຫວງບຸນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອັກຄິກະພາຣະທະວາຊະພາມໄດ້ຂາບທູນ ດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ພຣະ ໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ

ເປັນອັນວ່າ ທ່ານພຣະອັກຄິກະພາຣະທະວາຊະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນ ບັນດາພຣະອະຣະຫັນ ທັງຫຼາຍ

**ອັກຄິກະສູດທີ ໘ ຈົບ**

## ໙. ສຸນທະຣິກະສູດ

### ວ່າດ້ວຍສຸນທະຣິກະພາຣະທະວາຊະພາມ

[໑໙໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ຝັ່ງແມ່ນ້ຳສຸນທະຣິກາ ແຄວັນໂກ

ສິນ ສະໄໝນັ້ນ ສຸນທະຣິກະພາຣະທະວາຊະພາມບູຊາໄຟ ປິນເປີການບູຊາໄຟຢູ່ທີ່ຝັ່ງແມ່ນ້ຳສຸນທະຣິກາ ເມື່ອບູຊາແລ້ວລຸກຂຶ້ນຈາກບ່ອນນັ່ງຫລຽວເບິ່ງທິດທັງ ໔ ໂດຍຮອບດ້ວຍຄິດວ່າ ໃຜນໍຄວນບໍຣິໂພກ ເຂົ້າປາຍາດອັນເຫຼືອຈາກການບູຊານີ້

ສຸນທະຣິກະພາຣະທະວາຊະພາມ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຊົງຫົ່ມຜ້າຄຸມພຣະວໍຣະກາຍຕະຫຼອດພຣະສຽນ ປະທັບນັ່ງຢູ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ເມື່ອເຫັນແລ້ວມືຊ້າຍຖືເຂົ້າປາຍາດທີ່ເຫຼືອຈາກການບູຊາໄຟ ມືຂວາຖືເຕົ້ານ້ຳ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງເປີດຜ້າທີ່ຄຸມພຣະສຽນອອກ ຍ້ອນໄດ້ຍິນສຽງຍ່າງເຂົ້າມາຂອງສຸນທະຣິກະພາຣະທະວາຊະພາມ

ຄັ້ງນັ້ນ ສຸນທະຣິກະພາຣະທະວາຊະພາມກ່າວວ່າ ນີ້ສະມະນະຫົວໂລ້ນ ນີ້ສະມະນະຫົວໂລ້ນ ແລ້ວຕ້ອງການຈະກັບຈາກບ່ອນນັ້ນທັນທີ ລຳດັບນັ້ນ ສຸນທະຣິກະພາຣະທະວາຊະພາມໄດ້ມີຄວາມຄິດດັ່ງນີ້ວ່າ ພາມລາງພວກໃນໂລກນີ້ ເປັນຜູ້ຫົວໂລ້ນກໍມີ ທາງທີ່ດີເຮົາເພິ່ງເຂົ້າໄປຫາສະມະນະຫົວໂລ້ນນັ້ນແລ້ວຖາມເຖິງຊາດ

ລຳດັບນັ້ນ ສຸນທະຣິກະພາຣະທະວາຊະພາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານເປັນຊາດຫຍັງ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ທ່ານຢ່າຖາມເຖິງຊາດ ແຕ່ຈົ່ງຖາມເຖິງຄວາມປະພຶດເທີ້ນ
ໄຟຍ່ອມເກີດຈາກໄມ້ ບຸກຄົນເຖິງແມ່ນເກີດໃນຕະກູນຕ່ຳກໍເປັນມຸນີໄດ້
ມີຄວາມຊົງຈຳ ເປັນຜູ້ສະຫລຽວສະຫຼາດ[๑]
ກີດກັນອະກຸສົນທຳໄດ້ດ້ວຍຫິຣິ ເຝິກຕົນດ້ວຍສັດຈະ[๒]
ປະກອບແລ້ວດ້ວຍທະມະ ເຖິງທີ່ສຸດເວທະ ຢູ່ຈົບພົມມະຈັນແລ້ວ
ຜູ້ໃດ ນ້ອມການບູຊາເຂົ້າໄປບູຊາມຸນີນັ້ນ
ຜູ້ນັ້ນຊື່ວ່າບູຊາພຣະທັກຂິໄນຍະບຸກຄົນຖືກການ

ສຸນທະຣິກະພາຣະທະວາຊະພາມຂາບທູນ ວ່າ

ການບູຊານີ້ຂອງຂ້າພຣະອົງຈະເປັນອັນບູຊາດີແລ້ວ
ເປັນການເຊ່ນສວງດີແລ້ວແນ່ນອນ
ທີ່ຂ້າພຣະອົງໄດ້ພົບບຸກຄົນຜູ້ເຖິງທີ່ສຸດເວທະເຊັ່ນນັ້ນ
ຄວາມຈິງ ຍ້ອນຂ້າພຣະອົງບໍ່ພໍ້ບຸກຄົນເຊັ່ນພຣະອົງ
ຊົນອື່ນຈຶ່ງໄດ້ບໍຣິໂພກເຂົ້າປາຍາດອັນເຫຼືອຈາກການບູຊາ

ສຸນທະຣິກະພາຣະທະວາຊະພາມຂາບທູນວ່າ ພຣະໂຄດົມຜູ້ຈະເລີນ ເຊີນບໍຣິໂພກເທີ້ນ ພຣະອົງເປັນພາມ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ການທີ່ເຮົາກ່າວຄາຖາບໍ່ແມ່ນເພື່ອອາຫານ
ພາມ ນີ້ບໍ່ແມ່ນທຳນຽມຂອງຜູ້ເຫັນທຳ
ພຣະພຸດທະເຈົ້າທັງຫຼາຍ ບໍ່ຮັບອາຫານທີ່ໄດ້ມາຍ້ອນການກ່າວຄາຖາ

ພາມ ເມື່ອທຳນຽມມີຢູ່ ຈຶ່ງມີການປະພຶດແນວນີ້
ທ່ານຈົ່ງບຳລຸງດ້ວຍເຂົ້າແລະນ້ຳ ແລະດ້ວຍປັດໄຈອື່ນ
ແກ່ພຣະຂີນາສົບ ຜູ້ປະກອບດ້ວຍຄຸນທັງປວງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ມີຄວາມຄະນອງອັນສະງົບແລ້ວ
ຍ້ອນສາດສະໜານັ້ນເປັນເຂດບຸນຂອງຜູ້ສະແຫວງບຸນ໑

ລຳດັບນັ້ນ ສຸນທະຣິກະພາຣະທະວາຊະພາມຂາບທູນວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຖ້າເຊັ່ນນັ້ນ ຂ້າພຣະອົງຈະໃຫ້ເຂົ້າປາຍາດອັນເຫຼືອຈາກການບູຊານີ້ແກ່ໃຜ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພາມ ເຮົາຍັງບໍ່ເຫັນບຸກຄົນໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ເຊິ່ງຈະບໍຣິໂພກເຂົ້າປາຍາດທີ່ເຫຼືອຈາກການບູຊານີ້ແລ້ວ ເພິ່ງໃຫ້ເຖິງຄວາມຍ່ອຍໄປໂດຍດີ ນອກຈາກຕະຖາຄົດ ຫຼືສາວົກຂອງຕະຖາຄົດ ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຖິ້ມເຂົ້າປາຍາດທີ່ເຫຼືອຈາກການບູຊານັ້ນໃນບ່ອນປາສະຈາກຂອງຂຽວ ຫຼື ຈົ່ງຖິ້ມໃຫ້ຈົມລົງໄປໃນນ້ຳທີ່ບໍ່ມີໂຕສັດ

ລຳດັບນັ້ນ ສຸນທະຣິກະພາຣະທະວາຊະພາມຖິ້ມເຂົ້າປາຍາດອັນເຫຼືອຈາກການບູຊານັ້ນໃຫ້ຈົມລົງໄປໃນນ້ຳທີ່ບໍ່ມີໂຕສັດ ຄັ້ງນັ້ນ ເຂົ້າປາຍາດທີ່ເຫຼືອຈາກການບູຊານັ້ນ ທີ່ສຸນທະຣິກພາຣະທະວາຊະພາມຖອກລົງແລ້ວໃນນ້ຳ ຍ່ອມມີສຽງດັ່ງຈີ່ຈີ່ ແລະ ຟົດເປັນຄວັນຟຸ້ງຂຶ້ນ ຄືຜານທີ່ຮ້ອນໝົດມື້ ອັນບຸກຄົນຈຸ່ມລົງໃນນ້ຳຍ່ອມມີສຽງດັ່ງຈີ່ຈີ່ ແລະ ຟົດເປັນຄວັນຟຸ້ງຂຶ້ນ ສັນນັ້ນ

ລຳດັບນັ້ນ ສຸນທະຣິກະພາຣະທະວາຊະພາມປະຫຼາດໃຈເກີດຂົນລຸກຊູຊັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບສຸນທະຣິກະພາຣະທະວາຊະພາມຜູ້ຢືນຢູ່ບ່ອນທີ່ສົມຄວນດ້ວຍພຣະຄາຖາທັງຫຼາຍ ວ່າ

ພາມ ທ່ານກຳລັງເຜົາໄມ້ຢູ່ ຢ່າສຳຄັນວ່າບໍລິສຸດ
ກໍການເຜົາໄມ້ນີ້ເປັນຂອງພາຍນອກ
ຜູ້ສະຫຼາດທັງຫຼາຍບໍ່ກ່າວຄວາມບໍລິສຸດດ້ວຍການເຜົາໄມ້ນັ້ນ

ພາມ ເຮົາເຊົາການເຜົາໄມ້ທີ່ບຸກຄົນເພິ່ງປາຖະໜາ
ຄວາມບໍລິສຸດດ້ວຍການເຜົາໄມ້ເຊິ່ງເປັນຂອງພາຍນອກ
ຍັງໄຟ[໑]ໃຫ້ສະຫວ່າງແຈ້ງພາຍໃນຕົນຢ່າງແນ່ນອນ
ເຮົາເປັນພຣະອະຣະຫັນ ມີໄຟອັນສະຫວ່າງແຈ້ງແລ້ວເປັນປະຈຳ
ມີຈິດຕັ້ງໄວ້ຖືກຕ້ອງແລ້ວເປັນປະຈຳ ປະພຶດພົມມະຈັນຢູ່

ພາມ ມານະເປັນຄືພາລະຄືຫາບຂອງທ່ານ
ຄວາມໂກດເປັນຄືຄວັນ ມຸສາວາດເປັນຄືຂີ້ເຖົ່າ
ລີ້ນເປັນຄືພາຊະນະເຄື່ອງບູຊາ ຫະໄທເປັນຄືບ່ອນຕັ້ງກອງໄຟ
ຕົນທີ່ເຝິກດີແລ້ວ ເປັນຄວາມຮຸ່ງເຮືອງຂອງບຸຣຸດ

ພາມ ບຸກຄົນຜູ້ເຖິງເວທະທັງຫຼາຍນັ້ນແລ
ອາບໃນແມ່ນ້ຳຄືທຳຂອງສັດຕະບຸຣຸດທັງຫຼາຍ
ມີທ່າຄືສິນ ບໍ່ຂຸ່ນມົວ ອັນສັດຕະບຸຣຸດທັງຫຼາຍສັນເສີນແລ້ວ
ມີໂຕບໍ່ປຽກ ຍ່ອມຂ້າມເຖິງຝັ່ງ[໒]

ພາມ ສັດຈະ ທຳ ຄວາມສັງລວມ[໓] ພົມມະຈັນ
ການເຖິງທຳອັນປະເສີດ ອາໄສໃນທ່າມກາງ
ທ່ານຈົ່ງທຳຄວາມນອບນ້ອມໃນພຣະຂີນາສົບຜູ້ຊື່ກົງທັງຫຼາຍ
ເຮົາກ່າວຄົນນັ້ນວ່າ ຜູ້ມີທຳເປັນສາລະ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສຸນທະຣິກະພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ

ເປັນອັນວ່າ ທ່ານພຣະສຸນທະຣິກພາຣະທະວາຊະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ສຸນທະຣິກະສູດທີ ໙ ຈົບ**

# ໑໐. ພະຫຸທິຕິສູດ

## ວ່າດ້ວຍຄວາມສຸກເປັນຈຳນວນຫຼາຍ

[໑໙໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແຄມປ່າແຫ່ງໜຶ່ງ ແຄວັ້ນໂກສົນ ສະໄໝນັ້ນ ງົວພະລິພັດ ໑໔ ໂຕຂອງພາມພາຣະທະວາຊະໂຄດຄົນໜຶ່ງໄດ້ຫາຍໄປ

ຄັ້ງນັ້ນ ພາມພາຣະທະວາຊະໂຄດຫ່ວງສະແຫວງຫາງົວພະລິພັດເຫຼົ່ານັ້ນຢູ່ ເຂົ້າໄປເຖິງແຄມປ່ານັ້ນ ໄດ້ພົບພຣະຜູ້ມີພຣະພາກເຈົ້າປະທັບນັ່ງຄູ້ບັນລັງ ຕັ້ງພຣະກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ຢູ່ໃນແຄມປ່ານັ້ນແລ້ວ ເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ກ່າວຄາຖາເຫຼົ່ານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ງົວພະລິພັດ ໑໔ ໂຕ ຂອງພຣະສະມະນະນີ້ບໍ່ມີແນ່ນອນ
ແຕ່ຂອງເຮົາຫາຍໄປໄດ້ ໖໐ ມື້ເຂົ້າມື້ນີ້
ຍ້ອນເຫດນັ້ນ ພຣະສະມະນະນີ້ຈຶ່ງມີຄວາມສຸກ
ຕົ້ນງາທັງຫຼາຍທີ່ບໍ່ງາມ
ມີພຽງໃບສອງໃບ ໃນໄຮ່ຂອງພຣະສະມະນະນີ້ບໍ່ມີແນ່ນອນ
ຍ້ອນເຫດນັ້ນ ພຣະສະມະນະນີ້ຈຶ່ງມີຄວາມສຸກ

ໜູທັງຫຼາຍໃນເລົ້າເຂົ້າເປົ່າ ທີ່ລົບກວນພຣະສະມະນະນີ້
ດ້ວຍການຍົກຫູຊູຫາງຂຶ້ນໂຕນເຕັ້ນບໍ່ມີແນ່
ຍ້ອນເຫດນັ້ນ ພຣະສະມະນະນີ້ຈຶ່ງມີຄວາມສຸກ

ເຄື່ອງປູລາດຂອງພຣະສະມະນະນີ້ໃຊ້ຕັ້ງເຈັດເດືອນ
ທີ່ຈະຊະຊາຍດ້ວຍສັດໂຕນ້ອຍ ໆ ທັງຫຼາຍທີ່ບັງເກີດຂຶ້ນບໍ່ມີແນ່ນອນ
ຍ້ອນເຫດນັ້ນ ພຣະສະມະນະນີ້ຈຶ່ງມີຄວາມສຸກ

ແມ່ໝ້າຍມີລູກສາວ ໗ ຄົນ
ມີລູກຊາຍໜຶ່ງຄົນຫຼືສອງຄົນ
ແຕ່ຂອງພຣະສະມະນະນີ້ບໍ່ມີແນ່ນອນ
ຍ້ອນເຫດນັ້ນ ພຣະສະມະນະນີ້ຈຶ່ງມີຄວາມສຸກ

ແມງວັນລາຍ ມັກໄຕ່ຕອມຄົນນອນຫຼັບ
ທີ່ຈະໄຕ່ຕອມພຣະສະມະນະນີ້ບໍ່ມີແນ່

ຍ້ອນເຫດນັ້ນ ພຣະສະມະນະນີ້ຈຶ່ງມີຄວາມສຸກ

ໃນເວລາໃກ້ຮຸ່ງ ເຈົ້າໜີ້ທັງຫຼາຍ
ທີ່ຈະນຳມາທວງໜີ້ພຣະສະມະນະນີ້ວ່າ
ທ່ານທັງຫຼາຍຈົ່ງໃຫ້ ທ່ານທັງຫຼາຍຈົ່ງໃຫ້ບໍ່ມີແນ່ນອນ
ຍ້ອນເຫດນັ້ນ ພຣະສະມະນະນີ້ຈຶ່ງມີຄວາມສຸກ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະຄາຖາ ວ່າ

ພາມ ງົວພະລິພັດ ໑໔ ໂຕຂອງເຮົາບໍ່ມີເລີຍ
ແຕ່ຂອງທ່ານຫາຍໄປໄດ້ ໖໐ ມື້ເຂົ້າມື້ນີ້
ຍ້ອນເຫດນັ້ນ ເຮົາຈຶ່ງມີຄວາມສຸກ

ຕົ້ນງາທັງຫຼາຍທີ່ບໍ່ງາມ
ມີພຽງໃບສອງໃບ ໃນໄຮ່ຂອງເຮົາບໍ່ມີເລີຍ
ຍ້ອນເຫດນັ້ນ ເຮົາຈຶ່ງມີຄວາມສຸກ

ໜູທັງຫຼາຍໃນເລົ້າເຂົ້າເປົ່າ ທີ່ຈະລົບກວນເຮົາ
ດ້ວຍການຍົກຫູຊູຫາງຂຶ້ນໂຕນເຕັ້ນບໍ່ມີເລີຍ
ພາມ ຍ້ອນເຫດນັ້ນ ເຮົາຈຶ່ງມີຄວາມສຸກ

ເຄື່ອງປູລາດຂອງເຮົາໃຊ້ຕັ້ງເຈັດເດືອນ ທີ່ຈະຊະຊາຍ
ດ້ວຍສັດໂຕນ້ອຍ ໆ ທັງຫຼາຍທີ່ເກີດຂຶ້ນບໍ່ມີເລີຍ
ຍ້ອນເຫດນັ້ນ ເຮົາຈຶ່ງມີຄວາມສຸກ

ແມ່ໝ້າຍມີລູກສາວ ໗ ຄົນ
ມີລູກຊາຍໜຶ່ງຄົນຫຼືສອງຄົນ
ແຕ່ຂອງເຮົາບໍ່ມີເລີຍ
ຍ້ອນເຫດນັ້ນ ເຮົາຈຶ່ງມີຄວາມສຸກ

ແມງວັນລາຍ ມັກໄຕ່ຕອມຄົນນອນຫຼັບ
ທີ່ຈະໄຕ່ຕອມເຮົາບໍ່ມີເລີຍ
ຍ້ອນເຫດນັ້ນ ເຮົາຈຶ່ງມີຄວາມສຸກ
ພາມ ໃນເວລາໃກ້ຮຸ່ງ

ເຈົ້າໜີ້ທັງຫຼາຍ ທີ່ຈະນຳມາທວງໜີ້ເຮົາວ່າ
ທ່ານທັງຫຼາຍຈົ່ງໃຫ້ ທ່ານທັງຫຼາຍຈົ່ງໃຫ້ບໍ່ມີເລີຍ
ຍ້ອນເຫດນັ້ນ ເຮົາຈຶ່ງມີຄວາມສຸກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມພາຣະທະວາຊະໂຄດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະໂຄດົມຜູ້ຈະເລີນຊົງປະກາດທຳໂດຍປະຣິຍາຍເປັນຈຳນວນຫຼາຍ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຄົນຫລົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ສັນນັ້ນ ຂ້າພຣະອົງນີ້ ຂໍເຖິງພຣະສະມະນະໂຄດົມ ຜູ້ຈະເລີນ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂ້າພຣະອົງເພິ່ງໄດ້ບັນພະຊາ ອຸປະສົມບົດໃນສຳນັກຂອງພຣະໂຄດົມຜູ້ຈະເລີນ

ພາມພາຣະທະວາຊະໂຄດໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ທ່ານພຣະພາຣະທະວາຊະອຸປະສົມບົດແລ້ວບໍ່ດົນ ຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈົນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ເປັນອັນວ່າ ທ່ານພຣະພາຣະທະວາຊະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ພະຫຸທິຕິສູດທີ ໑໐ ຈົບ**

**ອະຣະຫັນຕະວັກທີ ໑ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

# ໘. ອຸປາສະກະວັກ

## ໝວດວ່າດ້ວຍອຸປາສົກ

# ໑. ກະສິພາຣະທະວາຊະສູດ

## ວ່າດ້ວຍກະສິພາຣະທະວາຊະພາມ

[໑໘໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໝູ່ບ້ານພາມຊື່ເອກນາລາ ທັກຂິນາຄີຣີ ຊົນນະບົດ ແຄວັນມະຄົດ ສະໄໝນັ້ນ ກະສິພາຣະທະວາຊະພາມປະກອບໄຖຈຳນວນ ໕໐໐ ໃນ ລະດູຫວ່ານເຂົ້າ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນ ສະເດັດເຂົ້າໄປສູ່ບ່ອນເຮັດວຽກງານຂອງກະສິພາຣະທະວາຊະພາມ

ສະໄໝນັ້ນ ກະສິພາຣະທະວາຊະພາມກຳລັງລ້ຽງອາຫານກັນຢູ່ ຄັ້ງນັ້ນ ພຣະຜູ້ມີພຣະ ພາກເຈົ້າສະເດັດເຂົ້າໄປສູ່ສະຖານທີ່ລ້ຽງອາຫານຂອງເຂົາແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ກະສິພາຣະທະວາຊະພາມໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ປະທັບຢືນບິນທະບາດຢູ່ ໄດ້ຂາບທູນ ດັ່ງນີ້ວ່າ ຂ້າແດ່ ພຣະສະມະນະ ຂ້າພຣະອົງໄຖແລະຫວ່ານ ເມື່ອໄຖແລະຫວ່ານແລ້ວ ຈຶ່ງບໍຣິ ໂພກ ຂ້າແດ່ ພຣະສະມະນະ ແມ່ນພຣະອົງກໍຈົ່ງໄຖແລະຫວ່ານ ເມື່ອໄຖແລະຫວ່ານແລ້ວ ຈົ່ງ ບໍຣິໂພກເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພາມ ແມ່ນເຮົາກໍໄຖແລະຫວ່ານຄືກັນ ເມື່ອໄຖແລະ ຫວ່ານແລ້ວກໍບໍຣິໂພກ

ກະສິພາຣະທະວາຊະພາມຂາບທູນວ່າ ຂ້າພຣະອົງບໍ່ເຫັນແອກ ໄຖ ຜານ ຄັນແຫຼມ ຫຼື ງົວພະລິພັດທັງຫຼາຍຂອງທ່ານ ເມື່ອເປັນແນວນີ້ ເປັນຫຍັງ? ພຣະໂຄດົມຜູ້ຈະເລີນຍັງກ້າກ່າວ ແນວນີ້ວ່າ ພາມ ແມ່ນເຮົາກໍໄຖແລະຫວ່ານ ເມື່ອໄຖແລະຫວ່ານແລ້ວກໍບໍຣິໂພກ

ຄັ້ງນັ້ນ ກະສິພາຣະທະວາຊະພາມ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ພຣະອົງຍັ້ງຢືນວ່າເປັນຊາວນາ
ແຕ່ຂ້າພຣະອົງບໍ່ເຫັນການໄຖຂອງພຣະອົງ
ພຣະອົງຜູ້ເປັນຊາວນາ ຂ້າພຣະອົງຖາມແລ້ວຂໍຈົ່ງຕັດບອກ
ຂ້າພຣະອົງຈະຮູ້ການໄຖຂອງພຣະອົງນັ້ນໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ສັດທາເປັນພືດ ຄວາມພຽນເປັນຝົນ
ປັນຍາຂອງເຮົາເປັນແອກແລະໄຖ ຫິຣິເປັນງອນໄຖ
ໃຈເປັນເຊືອກ ສະຕິຂອງເຮົາເປັນຜານແລະຄັນແຫຼມ
ເຮົາຄຸ້ມຄອງກາຍ ຄຸ້ມຄອງວາຈາໄດ້ແລ້ວ

ສັງລວມໃນການບໍຣິໂພກອາຫານ
ເຮົາເສຍຫຍ້າ ຄືວາຈາປິ້ນໄປ່ ດ້ວຍຄໍາສັດ
ໂສຣັດຈະຂອງເຮົາຊ່ອຍເຮັດວຽກໃຫ້ສໍາເລັດ
ຄວາມພຽນຂອງເຮົາຊ່ອຍນໍາທຸລະໄປໃຫ້ເຖິງຄວາມກະເສມຈາກໂຍຄະ
ນໍາໄປບໍ່ຖອຍຫຼັງ ນໍາໄປເຖິງທີ່ ເຊິ່ງບຸກຄົນໄປແລ້ວບໍ່ເສົ້າໂສກ
ເຮົາເຮັດນາແນວນີ້ ນາທີ່ເຮົາເຮັດນັ້ນມີຜົນເປັນອະມະຕະ[១]
ບຸກຄົນເມື່ອເຮັດນາແນວນີ້ແລ້ວ ຍ່ອມພົ້ນຈາກທຸກທັງປວງ

ກະສິພາຣະທະວາຊະພາມຂາບທູນວ່າ ພຣະໂຄດົມຜູ້ຈະເລີນ ຜູ້ເປັນຊາວນາ ຂໍຈົ່ງ ບໍຣິໂພກຜົນທີ່ເປັນອະມະຕະທີ່ທ່ານໄຖເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ການທີ່ເຮົາກ່າວຄາຖາບໍ່ແມ່ນເພື່ອອາຫານ
ພາມ ນີ້ບໍ່ແມ່ນທໍານຽມຂອງຜູ້ເຫັນທໍາ
ພຣະພຸດທະເຈົ້າທັງຫຼາຍບໍ່ຮັບອາຫານທີ່ໄດ້ມາຍ້ອນການກ່າວຄາຖາ

ພາມ ເມື່ອທໍານຽມມີຢູ່ ຈຶ່ງມີການປະພຶດແນວນັ້ນ
ທ່ານຈົ່ງບໍາລຸງດ້ວຍເຂົ້າແລະນໍ້າ ແລະດ້ວຍປັດໄຈອື່ນ
ແກ່ພຣະຂີນາສົບ ຜູ້ປະກອບດ້ວຍຄຸນທັງປວງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ມີຄວາມຄະນອງອັນສະງົບແລ້ວ
ຍ້ອນສາດສະໜານັ້ນເປັນເຂດບຸນຂອງຜູ້ສະແຫວງບຸນ[១]

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ກະສິພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂ້າພຣະອົງນີ້ຂໍເຖິງພຣະໂຄດົມຜູ້ຈະເລີນ ພ້ອມທັງພຣະທໍາແລະພຣະສົງເປັນສະຣະນະ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈໍາຂ້າພຣະອົງໄວ້ວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ກະສິພາຣະທະວາຊະສູດທີ ໑ ຈົບ**

# ໘. ອຸທະຍະສູດ

## ວ່າດ້ວຍອຸທະຍະພາມ

[໑໙໗] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປສູ່ທີ່ຢູ່ຂອງອຸທະຍະພາມ ລຳດັບນັ້ນ ອຸທະຍະພາມຕັກເຂົ້າໃສ່ບາດຖວາຍຈົນເຕັມ

ແມ່ນເທື່ອທີ ໒ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນ ສະເດັດເຂົ້າໄປສູ່ທີ່ຢູ່ຂອງອຸທະຍະພາມ ຯລຯ ລຳດັບນັ້ນ ອຸທະຍະພາມກໍຕັກເຂົ້າໃສ່ບາດຖວາຍຈົນເຕັມ

ແມ່ນເທື່ອທີ ໓ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນ ສະເດັດເຂົ້າໄປສູ່ທີ່ຢູ່ຂອງອຸທະຍະພາມ ຯລຯ ລຳດັບນັ້ນ ອຸທະຍະພາມກໍຕັກເຂົ້າໃສ່ບາດຖວາຍຈົນເຕັມແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ພຣະສະມະນະໂຄດົມນີ້ຕິດໃນຣົດຈຶ່ງສະເດັດມາເປັນປະຈຳ ໆ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ກະສິກອນຍ່ອມຫວ່ານພືດຢູ່ເປັນປະຈຳ ໆ
ຝົນຍ່ອມຕົກຢູ່ເປັນປະຈຳ ໆ ຊາວນາຍ່ອມໄຖນາຢູ່ເປັນປະຈຳ ໆ
ແວ່ນແຄວ້ນຍ່ອມສົມບູນດ້ວຍທັນຍະຊາດຢູ່ເປັນປະຈຳ ໆ
ຍາຈົກຍ່ອມຂໍຢູ່ເປັນປະຈຳ ໆ ທານະບໍດີຍ່ອມໃຫ້ຢູ່ເປັນປະຈຳ ໆ
ເມື່ອໃຫ້ຢູ່ເປັນປະຈຳ ໆ ແລ້ວ ກໍເຂົ້າເຖິງສະຫວັນຢູ່ເປັນປະຈຳ ໆ

ຜູ້ຕ້ອງການນ້ຳນົມຍ່ອມຮີດນ້ຳນົມຢູ່ເປັນປະຈຳ ໆ
ງົວນ້ອຍຍ່ອມເຂົ້າຫາແມ່ງົວຢູ່ເປັນປະຈຳ ໆ
ບຸກຄົນຍ່ອມລຳບາກແລະດີ້ນຮົນຢູ່ເປັນປະຈຳ ໆ
ຄົນຈ໊າຍ່ອມເຂົ້າເຖິງຫ້ອງຢູ່ເປັນປະຈຳ ໆ
ສັດຍ່ອມເກີດແລະຕາຍຢູ່ເປັນປະຈຳ ໆ
ບຸກຄົນທັງຫຼາຍຍ່ອມນຳຊາກສົບໄປປ່າຊ້າຢູ່ເປັນປະຈຳ ໆ
ສ່ວນຜູ້ມີປັນຍາຄືແຜ່ນດິນຍ່ອມບໍ່ເກີດຢູ່ເປັນປະຈຳ ໆ
ຍ້ອນໄດ້ມັກຜົນແລ້ວບໍ່ມີພົບໃໝ່ອີກຕໍ່ໄປ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອຸທະຍະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ຂ້າແດ່ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ຯລຯ ຂໍພຣະໂຄດົມ ຜູ້ຈະເລີນໂຜດຊົງຈຳຂ້າພຣະອົງໄວ້ວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ອຸທະຍະສູດທີ ໘ ຈົບ**

# ៩. ເທວະຫິຕະສູດ

## ວ່າດ້ວຍເທວະຫິດພາມ

[໑໘໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະປະຊວນດ້ວຍໂຣກລົມ ທ່ານພຣະອຸປະວານະເປັນອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອຸປະວານະມາຕັດວ່າ ອຸປະວານະ ຖ້າຈັ່ງຊັ້ນ ທ່ານຈົ່ງຈັດຫານ້ຳຮ້ອນສຳລັບເຮົາ

ທ່ານພຣະອຸປະວານະທູນຮັບສະໜອງພຣະດຳຣັດແລ້ວ ຄອງອັນຕະຣະວາສົກ ຖືບາດ ແລະຈີວອນ ເຂົ້າໄປສູ່ທີ່ຢູ່ຂອງເທວະຫິດພາມແລ້ວຢືນນິດຢູ່ທີ່ສົມຄວນ

ເທວະຫິດພາມໄດ້ເຫັນທ່ານພຣະອຸປະວານະຢືນນິດຢູ່ທີ່ສົມຄວນແລ້ວ ໄດ້ກ່າວກັບທ່ານພຣະອຸປະວານະດ້ວຍຄາຖາ ວ່າ

ທ່ານເປັນສະມະນະຫົວໂລ້ນ ຄອງຜ້າສັງຄາຕິຢືນນິດຢູ່
ທ່ານປາຖະໜາອັນໃດ ສະແຫວງຫາອັນໃດ ມາເພື່ອຂໍອັນໃດ?

ທ່ານພຣະອຸປະວານະຕອບ ວ່າ

ພຣະສຸຄົດມຸນີເປັນພຣະອະຣະຫັນໃນໂລກ
ຊົງພຣະປະຊວນດ້ວຍໂຣກລົມ
ພາມ ຖ້າທ່ານມີນ້ຳຮ້ອນ
ຂໍທ່ານຈົ່ງຖວາຍແດ່ພຣະສຸຄົດມຸນີດ້ວຍເທີ້ນ
ອາຕະມາພາບປາຖະໜາຈະນຳໄປຖວາຍພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຜູ້ຄວນບູຊາສັກກາຣະ ແລະນັບຖືກວ່າເປັນບັນດາພຣະອະຣິຍະບຸກຄົນ
ທີ່ຄວນບູຊາສັກກາຣະ ແລະນັບຖືເຫຼົ່ານັ້ນ

ຄັ້ງນັ້ນ ເທວະທິດພາມໃຫ້ບຸຣຸດຖືກາຕົ້ມນ້ຳຮ້ອນ ແລະຫໍ່ນ້ຳອ້ອຍນຳໄປຖວາຍທ່ານພຣະອຸປະວານະ ລຳດັບນັ້ນ ທ່ານພຣະອຸປະວານະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວທູນໃຫ້ອາບນ້ຳ ແລະ ໃຊ້ນ້ຳຮ້ອນລະລາຍນ້ຳອ້ອຍແລ້ວຖວາຍພຣະຜູ້ມີພຣະພາກເຈົ້າ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫາຍຈາກພຣະອາການປະຊວນ ຕໍ່ມາເທວະທິດພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ບຸກຄົນເພິ່ງໃຫ້ໄທຍະທຳໃນບ່ອນໃດ?
ທານທີ່ບຸກຄົນໃຫ້ໃນບ່ອນໃດແລ້ວ ມີຜົນຫຼາຍ
ທັກຂິນາສຳເລັດຜົນໄດ້ແນວໃດ? ແກ່ບຸກຄົນຜູ້ບູຊາແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ມຸນີຜູ້ບັນລຸອະພິນຍາ ຄືຮູ້ປຸບເພນິວາສະຍານຢ່າງແຈ່ມແຈ້ງ
ເຫັນສະຫວັນແລະອະບາຍ ທັງບັນລຸຄວາມສິ້ນຊາດ໌ແລ້ວ
ບຸກຄົນເພິ່ງໃຫ້ໄທຍະທຳໃນມຸນີນີ້ ທານທີ່ໃຫ້ແລ້ວໃນມຸນີນີ້ມີຜົນຫຼາຍ
ທັກຂິນາສຳເລັດຜົນແນວນີ້ແກ່ບຸກຄົນຜູ້ບູຊາແນວນີ້ແລ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ເທວະທິດພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະໂຄດົມຜູ້ຈະເລີນ ໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເທວະທິຕະສູດທີ ໓ ຈົບ**

# ໔. ມະຫາສາລະສູດ

## ວ່າດ້ວຍພາມມະນະມະຫາສານ

[໔໐໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພາມມະນະມະຫາສານຄົນໜຶ່ງ ເປັນຜູ້ເສົ້າໝອງ ນຸ່ງຜ້າເສົ້າໝອງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງ

ກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພາມມະນະມະຫາສານນັ້ນ ດັ່ງນີ້ວ່າ ພາມ ເປັນຫຍັງ? ທ່ານຈຶ່ງເບິ່ງເສົ້າໝອງ ນຸ່ງຫົ່ມກໍເສົ້າໝອງແທ້

ພາມມະນະມະຫາສານຂາບທູນວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ບຸດຂອງຂ້າພຣະອົງ ໔ ຄົນໃນເຮືອນນີ້ ສົມຄົບກັບພັນລະຍາແລ້ວຂັບຂ້າພຣະອົງອອກຈາກເຮືອນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຮຽນຄາຖານີ້ ເມື່ອໝູ່ມະຫາຊົນປະຊຸມກັນໃນສະພາ ແລະ ເມື່ອພວກບຸດມາປະຊຸມກັນພ້ອມແລ້ວ ຈົ່ງກ່າວວ່າ

ເຮົາຫຼົງຊົມຊື່ນແລະປາຖະໜາຄວາມຈະເລີນແກ່ບຸດເຫຼົ່າໃດ
ບຸດເຫຼົ່ານັ້ນສົມຄົບກັບພັນລະຍາຫຸ້ມວ່າເຮົາ ຄືໝາຫຸ້ມເຫົ່າໝູ
ໄດ້ຂ່າວວ່າ ບຸດເຫຼົ່ານັ້ນ ເປັນອະສັດຕະບຸຣຸດຜູ້ຊົ່ວຊາດ
ຮ້ອງຮຽກເຮົາວ່າ ພໍ່ ໆ

ບຸດເຫຼົ່ານັ້ນຄືຍັກແປງຮ່າງມາເກີດເປັນບຸດ
ລະຖິ້ມເຮົາຜູ້ລ່ວງເຂົ້າປັດສົມໄວໄວ້
ບຸດເຫຼົ່ານັ້ນ ກໍາຈັດຄົນແກ່ຜູ້ບໍ່ມີສົມບັດ
ອອກຈາກບ່ອນອາໄສຫາກິນ ຄືມ້າແກ່ທີ່ເຈົ້າຂອງປ່ອຍຖິ້ມ ສັນນັ້ນ
ບິດາຂອງບຸດຜູ້ເປັນພານ ເປັນຜູ້ເຖົ້າ ຕ້ອງຂໍເຂົາກິນໃນເຮືອນຜູ້ອື່ນ
ວ່າກັນວ່າ ໄມ້ການເທົ້າຂອງເຮົາຍັງດີກວ່າ

ພວກບຸດທີ່ບໍ່ເຊື່ອຟັງຈະດີອັນໃດ
ຍ້ອນໄມ້ການເທົ້າໃຊ້ປ້ອງກັນງົວຫຼືໝາຮ້າຍ ໆ ໄດ້
ໃນບ່ອນມືດໃຊ້ຍັນໄປຂ້າງໜ້າໄດ້ ໃນບ່ອນເລິກໃຊ້ຢັ່ງຄວາມເອົາໄດ້
ພາດແລ້ວຊ່ອຍຈັ້ງໄວ້ໄດ້ດ້ວຍອານຸພາບໄມ້ການເທົ້າ

ຄັ້ງນັ້ນ ພາມມະນະມະຫາສານນັ້ນຮຽນຄາຖານີ້ ໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ເມື່ອໝູ່ມະຫາຊົນປະຊຸມກັນທີ່ສະພາ ແລະເມື່ອພວກບຸດມາປະຊຸມກັນພ້ອມແລ້ວ ຈຶ່ງໄດ້ກ່າວວ່າ

ເຮົາຫຼົງຊົມຊື່ນແລະປາຖະໜາຄວາມຈະເລີນແກ່ບຸດເຫຼົ່າໃດ
ບຸດເຫຼົ່ານັ້ນສົມຄົບກັບພັນລະຍາຫຸ້ມວ່າເຮົາ ຄືໝາຫຸ້ມເຫົ່າໝູ
ໄດ້ຂ່າວວ່າ ບຸດເຫຼົ່ານັ້ນ ເປັນອະສັດຕະບຸຣຸດຜູ້ຊົ່ວຊາດ
ຮ້ອງຮຽກເຮົາວ່າ ພໍ່ ໆ

ບຸດເຫຼົ່ານັ້ນຄືຍັກແປງຮ່າງມາເກີດເປັນບຸດ
ລະຖິ້ມເຮົາຜູ້ລ່ວງເຂົ້າປັດສິມໄວໄວ້
ບຸດເຫຼົ່ານັ້ນ ກຳຈັດຄົນແກ່ຜູ້ບໍ່ມີສິນບັດ
ອອກຈາກບ່ອນອາໄສຫາກິນ ຄືມ້າແກ່ທີ່ເຈົ້າຂອງປ່ອຍຖິ້ມ ສັນນັ້ນ
ບິດາຂອງບຸດຜູ້ເປັນພານ ເປັນຜູ້ເຖົ້າ ຕ້ອງຂໍເຂົ້າກິນໃນເຮືອນຜູ້ອື່ນ
ວ່າກັນວ່າ ໄມ້ການເທົ້າຂອງເຮົາຍັງດີກວ່າ

ພວກບຸດທີ່ບໍ່ເຊື່ອຟັງຈະດີອັນໃດ
ຍ້ອນໄມ້ການເທົ້າໃຊ້ປ້ອງກັນງົວຫຼືໝາຮ້າຍ ໆ ໄດ້
ໃນບ່ອນມືດໃຊ້ຍັນໄປຂ້າງໜ້າໄດ້ ໃນບ່ອນເລິກໃຊ້ຢັ່ງຄວາມເອົາໄດ້
ພາດແລ້ວຊ່ອຍຈັ້ງໄວ້ໄດ້ດ້ວຍອານຸພາບໄມ້ການເທົ້າ

ລຳດັບນັ້ນ ພວກບຸດນຳພາມມະນະມະຫາສານນັ້ນໄປສູ່ເຮືອນ ໃຫ້ອາບນ້ຳແລ້ວ ໃຫ້ນຸ່ງຫົ່ມຜ້າຄູ່ໜຶ່ງ ພາມມະນະມະຫາສານນັ້ນ ຖືຜ້າຄູ່ໜຶ່ງໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພະເຈົ້າຊື່ວ່າເປັນພາມ ສະແຫວງຫາຊັບສຳລັບອາຈານ ມາໃຫ້ອາຈານ ຂໍພຣະໂຄດົມຜູ້ຈະເລີນ ຜູ້ເປັນອາຈານຂອງຂ້າພະເຈົ້າ ຈົ່ງຮັບສ່ວນຂອງອາຈານນີ້ດ້ວຍເທີ້ນ ພຣະຜູ້ມີພຣະພາກເຈົ້າຊົງຮັບດ້ວຍຄວາມອະນຸເຄາະ

ຄັ້ງນັ້ນ ພາມມະນະມະຫາສານນັ້ນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳ ຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ມະຫາສາລະສູດທີ ໔ ຈົບ**

## ໕. ມານັດຖັດທະສູດ

### ວ່າດ້ວຍມານັດຖັດທະພາມ

[໔໐໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພາມຊື່ ມານັດຖັດທະ (ກະດ້າງຍ້ອນຖືໂຕ) ພຳນັກຢູ່ໃນນະຄອນສາວັດຖີ

ເຂົາບໍ່ໄຫວ້ມານດາ ບິດາ ອາຈານ ແລະ ອ້າຍເລີຍ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີບໍລິສັດໝູ່ໃຫຍ່ຮ້ອມລ້ອມ ຊົງສະແດງທຳຢູ່

ຄັ້ງນັ້ນ ມານັດຖັດທະພາມໄດ້ມີຄວາມຄິດດັ່ງນີ້ວ່າ ພຣະສະມະນະໂຄດົມນີ້ມີບໍລິສັດ ໝູ່ໃຫຍ່ຮ້ອມລ້ອມ ຊົງສະແດງທຳຢູ່ ທາງທີ່ດີເຮົາຈະເຂົ້າໄປເຝົ້າພຣະສະມະນະໂຄດົມຮອດບ່ອນຢູ່ ຖ້າພຣະສະມະນະໂຄດົມຈັກທັກທາຍເຮົາ ເຮົາຈຶ່ງຈັກທັກທາຍທ່ານຕອບ ຖ້າພຣະສະມະນະໂຄດົມບໍ່ທັກທາຍເຮົາ ເຮົາກໍຈັກບໍ່ທັກທາຍທ່ານ

ລຳດັບນັ້ນ ມານັດຖັດທະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວຢືນນິດຢູ່ທີ່ສົມຄວນ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງທັກທາຍ ມານັດຖັດທະພາມຕ້ອງການຈະກັບຈາກທີ່ນັ້ນດ້ວຍຄິດວ່າ ພຣະສະມະນະໂຄດົມນີ້ບໍ່ຮູ້ອັນໃດ

ທີ່ນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄວາມຄິດຄຳນຶງຂອງມານັດຖັດທະພາມດ້ວຍພຣະຫະໄທແລ້ວ ໄດ້ຕັດກັບມານັດຖັດທະພາມດ້ວຍພຣະຄາຖາ ວ່າ

ພາມ ໃນໂລກນີ້ໃຜທີ່ຍັງມີມານະບໍ່ດີເລີຍ

ບຸກຄົນມາດ້ວຍປະໂຫຍດໃດ ເພິ່ງເພີ່ມພູນປະໂຫຍດນັ້ນໄວ້

ຄັ້ງນັ້ນ ມານັດຖັດທະພາມຄິດວ່າ ພຣະສະມະນະໂຄດົມຊົງຮູ້ຈິດຂອງເຮົາ ຈຶ່ງໝອບລົງດ້ວຍຫົວທີ່ໃກ້ພຣະບາດທັງສອງ ພຣະຜູ້ມີພຣະພາກເຈົ້າໃນບ່ອນນັ້ນເອງ ຈູບພຣະບາດທັງສອງພຣະຜູ້ມີພຣະພາກເຈົ້າ ແລະ ນວດດ້ວຍມື ປະກາດຊື່ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນຂ້າພຣະອົງຊື່ມານັດຖັດທະ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງຊື່ມານັດຖັດທະ

ຄັ້ງນັ້ນ ບໍລິສັດນັ້ນເກີດປະຫລາດໃຈວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ມານັດຖັດທະພາມນີ້ບໍ່ໄຫວ້ມານດາ ບິດາ ອາຈານ ແລະ ອ້າຍ ແຕ່ພຣະສະມະນະໂຄດົມຊົງເຮັດຄົນແບບນີ້ໃຫ້ທຳການນອບນ້ອມໄດ້ເປັນຢ່າງດີ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບມານັດຖັດທະພາມວ່າ ພໍລະ ພາມ ເຊີນລຸກຂຶ້ນນັ່ງເທິງບ່ອນນັ່ງຂອງຕົນເທີ້ນ ຍ້ອນທ່ານມີຈິດເຫຼື້ອມໃສໃນເຮົາແລ້ວ

ລຳດັບນັ້ນ ມານັດຖັດທະພາມນັ່ງເທິງບ່ອນນັ່ງຂອງຕົນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກດ້ວຍຄາຖາວ່າ

ບຸກຄົນບໍ່ຄວນມີມານະໃນຜູ້ໃດ?<br>
ຄວນມີຄວາມເຄົາລົບຜູ້ໃດ? ເພິ່ງຢຳເກງຜູ້ໃດ?

ບູຊາຜູ້ອື່ນດ້ວຍດີແລ້ວຈຶ່ງຈະເປັນການດີ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນບໍ່ຄວນມີມານະໃນມານດາ
ບິດາ ອ້າຍ ແລະ ໃນອາຈານເປັນທີ່ ໔
ເພິ່ງມີຄວາມເຄົາລົບໃນບຸກຄົນເຫຼົ່ານັ້ນ
ເພິ່ງຢຳເກງໃນບຸກຄົນເຫຼົ່ານັ້ນ
ບູຊາບຸກຄົນເຫຼົ່ານັ້ນດ້ວຍດີແລ້ວຈຶ່ງເປັນການດີ

ບຸກຄົນເພິ່ງທຳລາຍມານະ
ບໍ່ຄວນແຂງກະດ້າງ ເພິ່ງນອບນ້ອມພຣະອະຣະຫັນ ຜູ້ເຢືອກເຢັນ
ເຮັດກິດສຳເລັດແລ້ວ ບໍ່ມີອາສະວະ ບໍ່ມີຜູ້ອື່ນຍິ່ງກວ່ານັ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ມານັດຖັດທະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ມານັດຖັດທະສູດທີ ໕ ຈົບ**

# ໖. ປັດຈະນີກະສູດ

## ວ່າດ້ວຍປັດຈະນີກະສາຕະພາມ

[໒໐໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພາມຊື່ປັດຈະນີກະສາຕະ ພຳນັກຢູ່ໃນນະຄອນສາວັດຖີ ໄດ້ມີຄວາມຄິດດັ່ງນີ້ວ່າ ທາງທີ່ດີເຮົາເພິ່ງເຂົ້າໄປເຝົ້າພຣະສະມະນະໂຄດົມຮອດບ່ອນຢູ່ເທີ້ນ ບໍ່ວ່າພຣະສະມະນະໂຄດົມຈັກຕັດຄຳໃດຂຶ້ນມາ ເຮົາກໍຈັກຄັດຄ້ານຄຳນັ້ນ ໆ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈົງກົມຢູ່ໃນບ່ອນກາງແຈ້ງ ລຳດັບນັ້ນ ປັດຈະນີກະສາຕະ ພາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຍ່າງຕາມພຣະຜູ້ມີພຣະພາກເຈົ້າເຊິ່ງກຳລັງສະເດັດຈົງກົມຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂໍພຣະອົງຈົ່ງຕັດສະມະນະທຳເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຄຳສຸພາສິດ ສຳລັບຜູ້ຕັ້ງໃຈຈະຄັດຄ້ານ ມີຈິດເສົ້າໝອງ
ຫຼາຍໄປດ້ວຍຄວາມແຂ່ງດີ ຈະບໍ່ເຫັນດີດ້ວຍ
ສ່ວນບຸກຄົນໃດກຳຈັດຄວາມແຂ່ງດີ ຄວາມບໍ່ມີຈິດເຫຼື້ອມໃສ
ແລະຖອນຄວາມອາຄາດອອກແລ້ວຟັງຢູ່
ບຸກຄົນນັ້ນຈຶ່ງຈະຮູ້ຄຳສຸພາສິດນັ້ນໄດ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ປັດຈະນິກະສາຕະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ປັດຈະນີກະສູດທີ ໖ ຈົບ**

# ໗. ນະວະກຳມິກະສູດ

## ວ່າດ້ວຍນະວະກຳມິກະພາຣະທະວາຊະພາມ

[໔໐໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແຄມປ່າແຫ່ງໜຶ່ງ ແຄວ້ນໂກສົນ ສະໄໝນັ້ນ ນະວະກຳມິກະພາຣະທະວາຊະພາມໃຫ້ຄົນເຮັດວຽກຢູ່ໃນແຄມປ່ານັ້ນ ເຂົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ເຊິ່ງປະທັບນັ່ງຄູ້ບັນລັງ ຕັ້ງພຣະກາຍກົງດຳລົງສະຕິໄວ້ສະເພາະໜ້າ ຢູ່ເຫງົ້າໄມ້ສາລະແຫ່ງໜຶ່ງ ໄດ້ມີຄວາມຄິດດັ່ງນີ້ວ່າ ເຮົາໃຫ້ຄົນເຮັດວຽກຢູ່ໃນແຄມປ່າຈຶ່ງຍິນດີໄດ້ສ່ວນພຣະສະມະນະນີ້ໃຫ້ຄົນເຮັດຫຍັງຢູ່ຈຶ່ງຍິນດີໄດ້ນໍ?

ລຳດັບນັ້ນ ນະວະກຳມິກະພາຣະທະວາຊະພາມຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ພິກຂຸ ທ່ານເຮັດວຽກອັນໃດ ຈຶ່ງຢູ່ໃນປ່າໄມ້ສາລະ
ພຣະໂຄດົມຢູ່ໃນປ່າແຕ່ຜູ້ດຽວ ໄດ້ຄວາມຍິນດີຍ້ອນອັນໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ເຮົາບໍ່ໄດ້ເຮັດວຽກອັນໃດໃນປ່າດອກ
ປ່າຄືກິເລດອັນເປັນຂ້າເສິກຖືກເຮົາກົ່ນຮາກເຫງົ້າໝົດແລ້ວ

ເຮົາບໍ່ມີປ່າຄືກິເລດ ປາສະຈາກລູກສອນຄືກິເລດ
ລະຄວາມບໍ່ຍິນດີ ຍິນດີຢູ່ໃນປ່າແຕ່ຜູ້ດຽວ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນະວະກຳມິກະພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ນະວະກຳມິກະສູດທີ ໗ ຈົບ**

# ໘. ກັດຖະຫາຣະສູດ

## ວ່າດ້ວຍຄົນຫາຟືນ

[໘໐໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແຄມປ່າແຫ່ງໜຶ່ງ ແຄວ້ນໂກສົນ ສະໄໝນັ້ນ ມານົບຫຼາຍຄົນເຊິ່ງເປັນສິດຂອງພາມພາຣະທະວາຊະໂຄດຄົນໜຶ່ງເປັນຄົນຫາຟືນ ພາກັນເຂົ້າໄປສູ່ແຄມປ່ານັ້ນ ແລ້ວໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບນັ່ງຄູ້ບັນລັງ ຕັ້ງພຣະກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ຢູ່ໃນແຄມປ່ານັ້ນ ຈຶ່ງເຂົ້າໄປຫາພາມ ພາຣະທະວາຊະໂຄດຮອດບ່ອນຢູ່ ໄດ້ກ່າວກັບພາມພາຣະທະວາຊະໂຄດດັ່ງນີ້ວ່າ ຂໍທ່ານ ເພິ່ງຮູ້ ພຣະສະມະນະໂຄດົມຜູ້ປະທັບນັ່ງຄູ້ບັນລັງ ຕັ້ງພຣະກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ຢູ່ໃນແຄມປ່າ

ລຳດັບນັ້ນ ພາມພາຣະທະວາຊະໂຄດພ້ອມດ້ວຍມານົບເຫຼົ່ານັ້ນ ເຂົ້າໄປສູ່ແຄມປ່ານັ້ນແລ້ວ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບນັ່ງຄູ້ບັນລັງ ຕັ້ງພຣະກາຍກົງ ດຳລົງສະຕິໄວ້ສະເພາະໜ້າເຊັ່ນນັ້ນຈິງ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ຂາບທູນດ້ວຍຄາຖາວ່າ

ພິກຂຸ ທ່ານເຂົ້າໄປສູ່ປ່າທີ່ວ່າງເປົ່າປາສະຈາກຄົນ
ໃນປ່າໜາທຶບເປັນຕາຢ້ານຫຼາຍ ມີກາຍບໍ່ໄຫວຫວັ່ນ
ມີປະໂຫຍດອັນດີງາມ ເພ່ງພິນິດຢູ່ແນວນີ້ນໍ?

ທ່ານເປັນມຸນີອາໄສປ່າ ຢູ່ໃນປ່າແຕ່ຜູ້ດຽວ
ເຊິ່ງບໍ່ມີສຽງຂັບຮ້ອງ ແລະສຽງບັນເລງ
ການທີ່ທ່ານມີໃຈຍິນດີ ຢູ່ໃນປ່າແຕ່ຜູ້ດຽວນີ້
ຜາກົດເປັນຂໍ້ໜ້າອັດສະຈັນແກ່ຂ້າພະເຈົ້າ

ຂ້າພະເຈົ້າປາຖະໜາໄຕຣທິບອັນປະເສີດ[໑]
ຈຶ່ງຍາກເປັນສະຫາຍກັບທ້າວມະຫາພົມຜູ້ເປັນອະທິບໍດີຂອງໂລກ
ເຫດໃດທ່ານຈຶ່ງພໍໃຈປ່າທີ່ປາສະຈາກຄົນ
ທ່ານທຳຄວາມພຽນຢູ່ບ່ອນນີ້ເພື່ອຈະບັງເກີດເປັນພົມແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຄວາມມຸ້ງຫວັງ[໑] ຫຼື ຄວາມເພີດເພີນແນວໃດ ແນວໜຶ່ງ
ໃນອາລົມຫຼາຍຊະນິດເຊິ່ງມີຢູ່ປະຈຳທຸກເມື່ອນານາປະການ
ຫຼືຕັນຫາອັນເປັນເຫດໃຫ້ຫຼຸມຫຼົງທັງປວງນັ້ນ
ເຊິ່ງມີຄວາມບໍ່ຮູ້ເປັນມູນຮາກກໍ່ໃຫ້ເກີດຕໍ່ ໆ ໄປອີກ

ເຮົາເຮັດໃຫ້ສິ້ນສຸດພ້ອມທັງຮາກແລ້ວ
ເຮົານັ້ນຈຶ່ງບໍ່ມີຄວາມມຸ້ງຫວັງ ບໍ່ມີຕັນຫາອາໄສ
ບໍ່ມີຕັນຫາເຂົ້າມາໃກ້ ມີປົກກະຕິເຫັນມົດຈົດໃນທຳທັງປວງ
ບັນລຸສຳໂພທິຍານອັນປະເສີດ[໒] ປະເສີດສຸດແລ້ວ
ເຮົາຈຶ່ງຄວນແກ່ຄວາມເປັນພົມ ແກ່ກ້າ ເພ່ງພິນິດຢູ່[໓]

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມພາຣະທະວາຊະໂຄດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ກັດຖະຫາຣະສູດທີ ໗ ຈົບ**

## ໘. ມາຕຸໂປສະກະສູດ

### ວ່າດ້ວຍມາຕຸໂປສະກະພາມ

[໔໐໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ມາຕຸໂປສະກະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງສະແຫວງຫາພິກສາ

ໂດຍທຳ ໄດ້ມາແລ້ວກໍລ້ຽງມານດາແລະບິດາ ຂ້າພຣະອົງເຮັດແນວນີ້ ຊື່ວ່າ ເຮັດກິດທີ່ຄວນເຮັດຖືກບໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ຖືກຕ້ອງຢ່າງຍິ່ງ ພາມ ທ່ານເຮັດດັ່ງນີ້ຊື່ວ່າ ໄດ້ເຮັດກິດທີ່ຄວນເຮັດແລ້ວ ດ້ວຍວ່າຜູ້ໃດສະແຫວງຫາພິກສາໂດຍທຳໄດ້ມາແລ້ວ ກໍລ້ຽງມານດາແລະບິດາ ຜູ້ນັ້ນຍ່ອມປະສົບບຸນຫຼວງຫຼາຍ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ບຸກຄົນໃດລ້ຽງມານດາແລະບິດາໂດຍຖືກຕ້ອງທຳ
ຍ້ອນການບຳລຸງລ້ຽງມານດາແລະບິດາແນວນີ້
ບັນດິດຍ່ອມສັນເສີນບຸກຄົນນັ້ນຂະນະທີ່ຍັງຢູ່ໃນໂລກ
ເມື່ອຈາກໂລກນີ້ໄປແລ້ວ ຍ່ອມບັນເທີງໃນໂລກສະຫວັນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ມາຕຸໂປສະກະພາມໄດ້ຂາບທູນພຣະຜູ້ມີພຣະພາກດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຢ່າງຍິ່ງ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ມາຕຸໂປສະກະສູດທີ ໙ ຈົບ**

# ໑໐. ພິກຂະກະສູດ

## ວ່າດ້ວຍພິກຂະກະພາມ

[໔໐໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂະກະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງເປັນຄົນຂໍ ພຣະອົງກໍເປັນຜູ້ຂໍ ໃນເລື້ອງນີ້ເຮົາຈະມີອັນໃດແຕກຕ່າງກັນ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

บุกคินผู้ขํคินเຫຼົ່າອື່ນຢູ່
ຍ່ອມບໍ່ເປັນພິກຂຸດ້ວຍເຫດມີປະມານພຽງໃດ
ຜູ້ສະມາທານທຳຜິດກໍບໍ່ເປັນພິກຂຸດ້ວຍເຫດມີປະມານພຽງນັ້ນ
ຜູ້ໃດໃນໂລກນີ້ລະບຸນແລະບາບໄດ້ແລ້ວ
ປະພຶດພົມມະຈັນດ້ວຍການພິຈາລະນາ໌
ຜູ້ນັ້ນແລຈັດວ່າເປັນພິກຂຸ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂະກະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ພິກຂະກະສູດທີ ໑໐ ຈົບ**

## ໑໑. ສັງຄະຣະວະສູດ

### ວ່າດ້ວຍສັງຄະຣະວະພາມ

[໔໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ສັງຄະຣະວະພາມອາໄສຢູ່ໃນນະຄອນສາວັດຖີ ມີລັດທິຖືຄວາມບໍລິສຸດດ້ວຍນ້ຳ ປາຖະໜາຄວາມບໍລິສຸດດ້ວຍນ້ຳ ຖືການລົງອາບນ້ຳຊຳຣະຮ່າງກາຍທັງເວລາແລງແລະເວລາເຊົ້າເປັນປະຈຳ ເມື່ອເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນກຣຸງສາວັດຖີ ກັບມາຈາກບິນທະບາດ ພາຍຫຼັງຈາກສັນ ພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ສັງຄະຣະວະພາມອາໄສຢູ່ໃນນະຄອນສາວັດຖີ ເຂົາມີລັດທິຖືຄວາມບໍລິສຸດດ້ວຍນ້ຳ ປາຖະໜາຄວາມບໍລິສຸດດ້ວຍນ້ຳ ຖືການລົງອາບນ້ຳຊຳຣະຮ່າງກາຍທັງເວລາແລງ ແລະ ເວລາເຊົ້າເປັນປະຈຳ ຂ້າພຣະອົງ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດອະນຸເຄາະສະເດັດເຂົ້າໄປຫາສັງຄະຣະວະພາມຮອດບ່ອນຢູ່ດ້ວຍເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບ

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ

ສະເດັດເຂົ້າໄປຫາສັງຄະຣະວະພາມຮອດບ່ອນຢູ່ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ

ລຳດັບນັ້ນ ສັງຄະຣະວະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກຕັດຖາມສັງຄະຣະວະພາມວ່າ ພາມ ເຂົາເວົ້າກັນວ່າ ທ່ານໄດ້ຊື່ວ່າ ຖືຄວາມບໍລິສຸດດ້ວຍນ້ຳ ປາຖະໜາຄວາມບໍລິສຸດດ້ວຍນ້ຳ ທ່ານຖືການລົງອາບນ້ຳຊຳຣະຮ່າງກາຍທັງເວລາແລງແລະເວລາເຊົ້າເປັນປະຈຳ ແມ່ນບໍ?

ສັງຄະຣະວະພາມຂາບທູນວ່າ ຈິງແນວນັ້ນ ພຣະໂຄດົມຜູ້ຈະເລີນ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພາມ ທ່ານເຫັນອຳນາດປະໂຫຍດອັນໃດ ຈຶ່ງໄດ້ຊື່ວ່າມີລັດທິຖືຄວາມບໍລິສຸດດ້ວຍນ້ຳ ປາຖະໜາຄວາມບໍລິສຸດດ້ວຍນ້ຳ ຖືການລົງ ອາບນ້ຳຊຳຣະຮ່າງກາຍທັງເວລາແລງ ແລະ ເວລາເຊົ້າເປັນປະຈຳນໍ?

ສັງຄະຣະວະພາມທູນຕອບວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ບາບກຳໃດທີ່ຂ້າພຣະອົງເຮັດເວລາກາງເວັນ ຂ້າພຣະອົງກໍລອຍບາບກຳນັ້ນດ້ວຍການອາບນ້ຳເວລາແລງ ບາບກຳໃດທີ່ຂ້າພຣະອົງເຮັດເວລາກາງຄືນ ຂ້າພຣະອົງກໍລອຍບາບກຳນັ້ນດ້ວຍການອາບນ້ຳເວລາເຊົ້າ ຂ້າແດ່ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງໄດ້ ຊື່ວ່າມີລັດທິຖືຄວາມບໍຣິສຸດດ້ວຍນ້ຳ ປາຖະໜາຄວາມບໍລິສຸດດ້ວຍນ້ຳ ຖືການລົງອາບນ້ຳຊຳຣະຮ່າງກາຍທັງເວລາແລງແລະເວລາເຊົ້າເປັນປະຈຳ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພາມ ບຸກຄົນຜູ້ເຖິງເວທະທັງຫຼາຍນັ້ນແລ
ອາບໃນແມ່ນ້ຳຄືທຳຂອງສັດຕະບຸຣຸດທັງຫຼາຍ
ມີທ່າຄືສີນ ບໍ່ຂຸ່ນມົວ ອັນສັດຕະບຸຣຸດທັງຫຼາຍສັນເສີນແລ້ວ
ມີໂຕບໍ່ປຽກ ຍ່ອມຂ້າມເຖິງຝັ່ງ[໑]

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສັງຄະຣະວະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະໂຄດົມ ຜູ້ຈະເລີນໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ສັງຄະຣະວະສູດທີ ໑໑ ຈົບ**

# ໑໘. ໂຂມະທຸດສະສູດ

## ວ່າດ້ວຍຊາວໂຂມະທຸດສະນິຄົມ

[໔໐໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງເຈົ້າສາກະຍະຊື່ ໂຂມະທຸດສະ ແຄວັ້ນສັກກະ ຄັນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດຍັງໂຂມະທຸດສະນິຄົມ ສະໄໝນັ້ນ ພາມແລະຄະຫະບໍດີຊາວໂຂມະທຸດສະນິຄົມ ປະຊຸມກັນຢູ່ໃນສະພາດ້ວຍວຽກງານບາງຢ່າງ ແລະຝົນກຳກຳລັງຕົກຫຍອຍຢູ່ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ສະພານັ້ນ ພວກພາມ ແລະຄະຫະບໍດີຊາວໂຂມະທຸດສະນິຄົມ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກ ຈຶ່ງໄດ້ກ່າວດັ່ງນີ້ວ່າ ຄົນພວກໃດຊື່ວ່າ ສະມະນະຫົວໂລ້ນ ແລະ ຄົນພວກໃດຮູ້ຈັກທຳຂອງສະພາ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພາມ ແລະ ຄະຫະບໍດີຊາວໂຂມະທຸດສະນິຄົມດ້ວຍພຣະຄາຖາ ວ່າ

ບ່ອນໃດບໍ່ມີສັດຕະບຸຣຸດ ບ່ອນນັ້ນບໍ່ຊື່ວ່າ ສະພາ
ຄົນເຫຼົ່າໃດ ບໍ່ກ່າວທຳ ຄົນເຫຼົ່ານັ້ນບໍ່ຊື່ວ່າ ສັດຕະບຸຣຸດ
ຍ້ອນພວກສັດຕະບຸຣຸດລະຣາຄະ ໂທສະ ແລະ ໂມຫະໄດ້ແລ້ວ
ຈຶ່ງກ່າວທຳຢູ່[໑]

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມແລະຄະຫະບໍດີຊາວໂຂມະທຸດສະນິຄົມ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຢ່າງຍິ່ງ ພຣະໂຄດົມຜູ້ຈະເລີນຊົງປະກາດທຳໂດຍປະຣິຍາຍຫຼວງຫຼາຍ ຄືບຸກຄົນຫງາຍຂອງທີ່ຂວ້ຳໄຂຂອງທີ່ອັດ ບອກທາງແກ່ຄົນຫລົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ສັນນັ້ນ ພວກຂ້າພຣະອົງເຫຼົ່ານີ້ ຂໍເຖິງພຣະໂຄດົມ ຜູ້ຈະເລີນ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳພວກຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ໂຂມະທຸດສະສູດທີ ໑໘ ຈົບ**

**ອຸປາສະກະວັກທີ ໘ ຈົບ**

### ລວມພຣະສູດທີ່ ມີໃນວັກນີ້ ຄື



**ພາມມະນະສັງຍຸດ ຈົບບໍລິບູນ**

# ໘. ວັງຄີສະສັງຍຸດ

## ໑. ນິກຂັນຕະສູດ

### ວ່າດ້ວຍຜູ້ອອກບວດ

[໔໐໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະວັງຄີສະຢູ່ທີ່ອັກຄາລະວະເຈດີ ເຂດເມືອງອາລະວີ ກັບທ່ານພຣະນິໂຄທະກັບປະຜູ້ເປັນອຸປັດຊາ ສະໄໝນັ້ນ ທ່ານພຣະວັງຄີສະຍັງເປັນພິກຂຸໃໝ່ບວດໄດ້ບໍ່ດົນ ຖືກໃຊ້ໃຫ້ເຝົ້າວິຫານ

ຄັ້ງນັ້ນ ສະຕີຈຳນວນຫຼາຍພາກັນປະດັບປະດາຮ່າງກາຍສວຍງາມ ເຂົ້າໄປສູ່ອາຣາມທ່ຽວເບິ່ງທີ່ຢູ່ຂອງພິກຂຸທັງຫຼາຍ ໃນຂະນະນັ້ນ ທ່ານພຣະວັງຄີສະເກີດຄວາມບໍ່ຍິນດີຍ້ອນໄດ້ເຫັນສະຕີເຫຼົ່ານັ້ນ ເພາະໄດ້ຖືກຄວາມກຳໜັດລົບກວນຈິດ

ລຳດັບນັ້ນ ທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ບໍ່ແມ່ນລາບຂອງເຮົາເລີຍ ບໍ່ແມ່ນລາບຂອງເຮົາເລີຍ ເຮົາໄດ້ຊົ່ວນໍ ເຮົາບໍ່ໄດ້ດີນໍທີ່ເຮົາເກີດຄວາມບໍ່ຍິນດີ ຄວາມກຳໜັດລົບກວນຈິດ ເຫດທີ່ຈະໃຫ້ຄົນອື່ນຊ່ອຍບັນເທົາຄວາມບໍ່ຍິນດີ ທຳຄວາມຍິນດີໃຫ້ເກີດຂຶ້ນ ແກ່ເຮົານັ້ນເຮົາຈະໄດ້ຈາກຢູ່ໃສ ທາງທີ່ດີເຮົາເພິ່ງບັນເທົາຄວາມບໍ່ຍິນດີ ທຳຄວາມຍິນດີໃຫ້ເກີດຂຶ້ນແກ່ຕົນດ້ວຍຕົນເອງເທີ້ນ

ຄັ້ງນັ້ນ ທ່ານພຣະວັງຄີສະບັນເທົາຄວາມບໍ່ຍິນດີແລ້ວ ທຳຄວາມຍິນດີໃຫ້ເກີດຂຶ້ນ ແກ່ຕົນດ້ວຍຕົນເອງແລ້ວ ຈຶ່ງກ່າວຄາຖາເຫຼົ່ານີ້ໃນເວລານັ້ນວ່າ

ຄວາມນຶກກັບຄວາມຄະນອງຊົ່ວຊາມເຫຼົ່ານີ້
ກຳລັງເຂົ້າຄອບງຳເຮົາຜູ້ອອກຈາກເຮືອນບວດເປັນບັນພະຊິດ
ບຸດຂອງຄົນສູງສັກໄດ້ສຶກສາວິຊາຍິງທະນູໄດ້ເທື່ອລະຫຼາຍ ໆ ລູກ
ຢ່າງຊ່ຽວຊານ ຍິງລູກທະນູ ໑,໐໐໐ ລູກ ໄປຮອບ ໆ ໂຕ
ເຖິງແມ່ນແມ່ຍິງຈະມາຫລາຍກວ່າລູກທະນູຈຳນວນນັ້ນ
ກໍຈະບຽດບຽນເຮົາຜູ້ຕັ້ງໝັ້ນໃນທຳຂອງຕົນບໍ່ໄດ້

ຍ້ອນວ່າ ເຮົາໄດ້ສະດັບທາງເປັນທີ່ໃຫ້ເຖິງນິບພານນີ້
ເບື້ອງພຣະພັກຂອງພຣະພຸດທະເຈົ້າ ຜູ້ເປັນເຜົ່າພັນດວງອາທິດ
ໃຈຂອງເຮົາຍິນດີແລ້ວໃນທາງນັ້ນແນ່ນອນ
ມານຜູ້ມີບາບ ຖ້າທ່ານຍັງເຂົ້າມາຫາເຮົາຜູ້ຢູ່ດ້ວຍອາການແນວນີ້
ເຮົາກໍຈະເຮັດໃຫ້ທ່ານແນມບໍ່ເຫັນທາງຂອງເຮົາ

**ນິກຂັນຕະສູດທີ ໑ ຈົບ**

# ໘. ອະຣະຕີສູດ

## ວ່າດ້ວຍຄວາມບໍ່ຍິນດີ

[໔໑໐] ສະໄໝໜຶ່ງ ທ່ານພຣະວັງຄີສະຢູ່ທີ່ອັກຄາລະວະເຈດີ ເຂດເມືອງອາລະວີກັບທ່ານພຣະນິໂຄທະກັບປະຜູ້ເປັນອຸປັດຊາ ສະໄໝນັ້ນ ທ່ານພຣະນິໂຄທະກັບປະກັບຈາກ ບິນທະບາດພາຍຫຼັງ ຈາກສັນພັດຕາຫານສຳເລັດແລ້ວ ເຂົ້າໄປສູ່ວິຫານ ແລ້ວອອກມາໃນເວລາແລງແດ່ ໃນເວລາພິກຂາຈານໃນເຊົ້າມື້ອື່ນແດ່

ສະໄໝນັ້ນ ທ່ານພຣະວັງຄີສະເກີດຄວາມບໍ່ຍິນດີ ຄວາມກຳໜັດລົບກວນຈິດ ລຳດັບນັ້ນທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ບໍ່ແມ່ນລາບຂອງເຮົາເລີຍ ບໍ່ແມ່ນລາບຂອງເຮົາເລີຍ ເຮົາໄດ້ຊົ່ວນໍ ເຮົາບໍ່ໄດ້ດີນໍ ທີ່ເຮົາເກີດຄວາມບໍ່ຍິນດີ ຄວາມກຳໜັດລົບກວນຈິດ ເຫດທີ່ຈະໃຫ້ຄົນອື່ນຊ່ອຍບັນເທົາຄວາມບໍ່ຍິນດີ ທຳຄວາມຍິນດີໃຫ້ເກີດຂຶ້ນແກ່ເຮົານັ້ນ ເຮົາຈະໄດ້ມາຈາກໄສ ທາງທີ່ດີເຮົາເພິ່ງບັນເທົາຄວາມບໍ່ຍິນດີ ທຳຄວາມຍິນດີໃຫ້ເກີດຂຶ້ນແກ່ຕົນດ້ວຍຕົນເອງເທີ້ນ

ຄັ້ງນັ້ນ ທ່ານພຣະວັງຄີສະບັນເທົາຄວາມບໍ່ຍິນດີແລ້ວ ທຳຄວາມຍິນດີໃຫ້ເກີດຂຶ້ນແກ່ຕົນ

ດ້ວຍຕົນເອງແລ້ວ ຈຶ່ງກ່າວຄາຖາເຫຼົ່ານີ້ໃນເວລານັ້ນ ວ່າ

ຜູ້ໃດລະຄວາມຍິນດີ ຄວາມບໍ່ຍິນດີ
ແລະຄວາມນຶກກ່ຽວກັບບ້ານເຮືອນໄດ້ທັງໝົດ
ໝົດຕັນຫາ ບໍ່ມີກິເລດ ບໍ່ເພິ່ງກໍ່ຕັນຫາຄືປ່າບໍ່ວ່າຢູ່ໄສ
ຜູ້ນັ້ນຊື່ວ່າເປັນພິກຂຸ

ຮູບແນວໃດ? ແນວໜຶ່ງໃນໂລກນີ້
ທັງທີ່ອາໄສແຜ່ນດິນ ຢູ່ໃນອາກາດ ອັນນັບເນື່ອງໃນພົບ ໓
ລ້ວນບໍ່ທ່ຽງ ຊຸດໂຊມໄປທັ້ງຫຼາຍ
ທ່ານຜູ້ຮູ້ທັງຫຼາຍຮູ້ແຈ້ງແນວນີ້ແລ້ວ ມີຕົນລຸດພົ້ນທ່ຽວໄປ
ເຫຼົ່າປຸຖຸຊົນທີ່ມີຈິດໝົກມຸ້ນໃນອຸປະທິທັງຫຼາຍ
ຄື ຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະ
ທ່ານຈິ່ງເປັນຜູ້ບໍ່ຫວັ່ນໄຫວ ກຳຈັດຄວາມພໍໃຈໃນການມະຄຸນ ໕ ນີ້

ຜູ້ໃດບໍ່ຕິດຢູ່ໃນການມະຄຸນ ໕ ນັ້ນ
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າເປັນມຸນີ
ຖ້າມິດສາວິຕົກທີ່ອີງອາໄສທິດຖິ ໒໐ ປະການ[១]
ເຊິ່ງເປັນທຳທີ່ບໍ່ຕັ້ງໝັ້ນໃນການໃດ ໆ
ຜູ້ໃດບໍ່ເພິ່ງເປັນໄປໃນອຳນາດກິເລດດ້ວຍອຳນາດມິດສາວິຕົກເຫຼົ່ານັ້ນ
ທັງບໍ່ມັກກ່າວຄຳຫຍາບຄາຍ ຜູ້ນັ້ນຊື່ວ່າເປັນພິກຂຸ

ພິກຂຸຜູ້ເປັນບັນດິດ ມີຈິດໝັ້ນຄົງມາດົນ ບໍ່ລວງໂລກ
ມີປັນຍາເຄື່ອງບໍລິຫານ ໝົດການທະເຍີທະຍານ
ເປັນມຸນີ ໄດ້ບັນລຸສັນຕິບົດ ດັບກິເລດແລ້ວ ຖ້າເວລາຢູ່[៤]

**ອະຣະຕິສູດທີ ໘ ຈົບ**

## ໙. ເປສະລາຕິມັນຍະນາສູດ

### ວ່າດ້ວຍການນຶກດູໝິ່ນພິກຂຸຜູ້ມີສິນເປັນທີ່ຮັກ

[໘໑໑] ສະໄໝໜຶ່ງ ທ່ານພຣະວັງຄີສະຢູ່ທີ່ອັກຄາລະວະເຈດີ ເຂດເມືອງອາລະວີ ກັບທ່ານ ພຣະນິໂຄທະກັບປະຜູ້ເປັນອຸປັດຊາ ສະໄໝນັ້ນ ທ່ານພຣະວັງຄີສະນຶກດູໝິ່ນພິກຂຸທັງຫຼາຍ

ຜູ້ມີສີນເປັນທີ່ຮັກເຫຼົ່າອື່ນ ຍ້ອນປະຕິພານຂອງຕົນ ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ບໍ່ແມ່ນລາບຂອງເຮົາເລີຍ ບໍ່ແມ່ນລາບຂອງເຮົາເລີຍ ເຮົາໄດ້ຊົ່ວນໍ ເຮົາບໍ່ໄດ້ດີນໍ ທີ່ເຮົາດູໝິ່ນພິກຂຸທັງຫຼາຍ ຜູ້ມີສີນເປັນທີ່ຮັກເຫຼົ່າອື່ນ ຍ້ອນປະຕິພານຂອງຕົນ

ຄັ້ງນັ້ນ ທ່ານພຣະວັງຄີສະໃຫ້ຄວາມເດືອດຮ້ອນເກີດຂຶ້ນແກ່ຕົນດ້ວຍຕົນເອງແລ້ວ ຈຶ່ງກ່າວ ຄາຖາເຫຼົ່ານີ້ໃນເວລານັ້ນ ວ່າ

ທ່ານຜູ້ເປັນສາວົກຂອງພຣະໂຄດົມ
ທ່ານຈົ່ງລະຄວາມຈອງຫອງ
ແລະຈົ່ງລະທາງແຫ່ງຄວາມຈອງຫອງໃຫ້ໝົດ
ຍ້ອນຜູ້ທີ່ໝົກມຸ້ນຢູ່ໃນທາງແຫ່ງຄວາມຈອງຫອງ
ຈະຕ້ອງເດືອດຮ້ອນເປັນເວລາດົນ

ໝູ່ສັດທີ່ຍັງລົບຫຼູ່ຄຸນທ່ານ
ຖືກຄວາມຈອງຫອງກຳຈັດແລ້ວ ຍ່ອມຕົກນະຮົກ
ເຫຼົ່າປຸຖຸຊົນທີ່ຖືກຄວາມຈອງຫອງກຳຈັດແລ້ວ
ເກີດໃນນະຮົກ ຍ່ອມເສົ້າໂສກຕະຫຼອດການລະນານ

ບາງເທື່ອ ພິກຂຸປະຕິບັດຊອບແລ້ວ
ຊະນະກິເລດໄດ້ດ້ວຍມັກ ບໍ່ເສົ້າໂສກເລີຍ
ກັບໄດ້ກຽດຕິຄຸນແລະຄວາມສຸກ
ບັນດິດທັງຫຼາຍຮຽກພິກຂຸຜູ້ປະຕິບັດຊອບເຊັ່ນນັ້ນວ່າເປັນຜູ້ເຫັນທຳ

ຍ້ອນເຫດນັ້ນ ພິກຂຸໃນພຣະສາດສະໜານີ້
ບໍ່ຄວນມີກິເລດເຄື່ອງຕຶງໃຈ ໕ ປະການ
ຄວນມີແຕ່ຄວາມພຽນຊອບ ລະນິວອນໄດ້ແລ້ວ ເປັນຜູ້ບໍລິສຸດ
ທັງລະຄວາມຈອງຫອງໄດ້ໝົດ ສະງົບລະງັບແລ້ວ
ເຮັດທີ່ສຸດແຫ່ງທຸກໄດ້ດ້ວຍວິດຊາ

**ເປສະລາຕິມັນຍະນາສູດທີ ໓ ຈົບ**

# ໔. ອານັນທະສູດ

## ວ່າດ້ວຍພຣະອານົນ

[໔໑໘] ສະໄໝໜຶ່ງ ທ່ານພຣະອານົນຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ເມື່ອເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດ ແລະຈີວອນ ເຂົ້າໄປບິນທະບາດໃນກຣຸງສາວັດຖີ ມີທ່ານພຣະວັງຄີສະເປັນປັດສາສະມະນະ ສະໄໝນັ້ນ ທ່ານພຣະວັງຄີສະເກີດຄວາມບໍ່ຍິນດີ ຄວາມກຳໜັດລົບກວນຈິດ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ກ່າວກັບທ່ານພຣະອານົນດ້ວຍຄາຖາ ວ່າ

ທ່ານຜູ້ເປັນສາວົກຂອງພຣະໂຄດົມ
ຂ້າພະເຈົ້າຖືກກາມຣາຄະແຜດເຜົາ
ຈິດຂອງຂ້າພະເຈົ້າຮ້ອນຮົນ
ຂ້າພະເຈົ້າຈະຂໍໂອກາດ ຂໍທ່ານໂຜດອະນຸເຄາະ
ຊ່ອຍບອກເຫດດັບຣາຄະໃຫ້ດ້ວຍ

ທ່ານພຣະອານົນກ່າວ ວ່າ

ຈິດຂອງທ່ານຮ້ອນຮົນ ຍ້ອນຄວາມສຳຄັນຜິດ
ທ່ານຈົ່ງລະຖິ້ມນິມິດວ່າງາມ ເຊິ່ງປະກອບດ້ວຍຣາຄະ
ທ່ານຈົ່ງເບິ່ງສັງຂານທັງຫຼາຍ ໂດຍຄວາມເປັນຂອງຜັນແປ
ໂດຍຄວາມເປັນທຸກ ແລະຢ່າເບິ່ງໂດຍຄວາມເປັນອັດຕາ
ຈົ່ງດັບຣາຄະແຮງກ້າ ຢ່າຖືກຣາຄະເຜົາຜານຢູ່ປະຈຳ ໆ ເລີຍ

ທ່ານຈົ່ງອົບຮົມຈິດ ໃຫ້ມີອາລົມດຽວ
ໃຫ້ຕັ້ງໝັ້ນດີ ດ້ວຍການພິຈາລະນາເຫັນວ່າບໍ່ງາມ
ຈົ່ງອົບຮົມກາຍະຄະຕາສະຕິ ແລະຈົ່ງເປັນຜູ້ເບື່ອໜ່າຍໃຫ້ຫຼາຍ
ທ່ານຈົ່ງອົບຮົມຄວາມບໍ່ມີນິມິດ ແລະຈົ່ງຖອນມານານຸໄສ
ຈາກນັ້ນ ທ່ານຈັກເປັນຜູ້ສະງົບ ທ່ຽວໄປ ຍ້ອນລະມານະໄດ້[໑]

**ອານັນທະສູດທີ ໔ ຈົບ**

# ໕. ສຸພາສິດສູດ

## ວ່າດ້ວຍວາຈາສຸພາສິດ

[໔໑໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ວາຈາປະກອບດ້ວຍອົງ ໔ ເປັນສຸພາສິດ ບໍ່ເປັນທຸບພາສິດ ບໍ່ມີໂທດ ແລະວິນຍູຊົນທັງຫຼາຍບໍ່ຕິຕຽນ

ວາຈາປະກອບດ້ວຍອົງ ໔ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ກ່າວແຕ່ວາຈາສຸພາສິດແນວດຽວ ບໍ່ກ່າວວາຈາທຸບພາສິດ
໒. ກ່າວແຕ່ວາຈາທີ່ເປັນທຳແນວດຽວ ບໍ່ກ່າວວາຈາທີ່ບໍ່ເປັນທຳ
໓. ກ່າວແຕ່ວາຈາອັນເປັນທີ່ຮັກແນວດຽວ ບໍ່ກ່າວວາຈາອັນບໍ່ເປັນທີ່ຮັກ
໔. ກ່າວແຕ່ວາຈາຈິງແນວດຽວ ບໍ່ກ່າວວາຈາເຫຼາະແຫຼະ

ພິກຂຸທັງຫຼາຍ ວາຈາປະກອບດ້ວຍອົງ ໔ ເຫຼົ່ານີ້ແລ ເປັນສຸພາສິດ ບໍ່ເປັນທຸບພາສິດ ບໍ່ມີໂທດ ແລະ ວິນຍູຊົນທັງຫຼາຍບໍ່ຕິຕຽນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ສັດຕະບຸຣຸດທັງຫຼາຍ ກ່າວວາຈາສຸພາສິດວ່າເປັນວາຈາສູງສຸດ
ບຸກຄົນເພິ່ງກ່າວວາຈາທີ່ເປັນທຳ
ບໍ່ເພິ່ງກ່າວວາຈາທີ່ບໍ່ເປັນທຳເປັນທີສອງ
ບຸກຄົນເພິ່ງກ່າວວາຈາອັນເປັນທີ່ຮັກ
ບໍ່ເພິ່ງກ່າວວາຈາອັນບໍ່ເປັນທີ່ຮັກເປັນທີ່ສາມ
ບຸກຄົນເພິ່ງກ່າວວາຈາຈິງ
ບໍ່ເພິ່ງກ່າວວາຈາຕົວະເປັນທີສີ່

ຄັ້ງນັ້ນ ທ່ານພຣະວັງຄີສະລຸກຂຶ້ນຈາກອາສະນະ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ ຂ້າແດ່ ພຣະສຸຄົດ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເນື້ອຄວາມນັ້ນ ຈົ່ງຜາກົດແກ່ທ່ານເທີ້ນ ວັງຄີສະ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ທູນສັນເສີນພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາທັງຫຼາຍອັນສົມຄວນ ຢູ່ສະເພາະພຣະພັກ ວ່າ

ບຸກຄົນ ເພິ່ງກ່າວແຕ່ວາຈາ
ທີ່ບໍ່ເປັນເຫດເຮັດໃຫ້ຕົນເດືອດຮ້ອນ
ແລະບໍ່ເປັນເຫດບຽດບຽນຊົນອື່ນ
ວາຈານັ້ນ ເປັນສຸພາສິດ

ບຸກຄົນ ເພິ່ງກ່າວແຕ່ວາຈາອັນເປັນທີ່ຮັກ
ທີ່ຊົນທັງຫຼາຍພໍໃຈ ບໍ່ເພິ່ງເວົ້າຫຍາບຄາຍຕໍ່ຊົນເຫຼົ່າອື່ນ
ເພິ່ງເວົ້າແຕ່ວາຈາອັນເປັນທີ່ຮັກ
ຄຳສັດເປັນວາຈາບໍ່ຕາຍ

ທຳນີ້ເປັນຂອງເກົ່າ
ສັດຕະບຸຣຸດທັງຫຼາຍຕັ້ງໝັ້ນແລ້ວໃນຄຳສັດ
ທັງທີ່ເປັນອັດຖະແລະເປັນທຳ

ພຣະພຸດທະເຈົ້າຕັດພຣະວາຈາໃດ ອັນກະເສມ
ເພື່ອບັນລຸນິບພານ ເພື່ອເຮັດທີ່ສຸດແຫ່ງທຸກ
ພຣະວາຈານັ້ນ ສູງສຸດກວ່າວາຈາທີ່ມີຢູ່ທັງຫຼາຍ[໑]

**ສຸພາສິດສູດທີ ໕ ຈົບ**

# ໗. ສາຣີປຸດຕະສູດ
## ວ່າດ້ວຍພຣະສາຣີບຸດ

[໔໑໘] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດຊີ້ແຈ່ງໃຫ້ພິກຂຸທັງຫຼາຍ ເຫັນແຈ້ງນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ດ້ວຍວາຈາຊາວເມືອງທີ່ສະລະສະລວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ສ່ວນພິກຂຸເຫຼົ່ານັ້ນ ຕ່າງກໍໃສ່ໃຈໃຫ້ສຳເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງ່ຽງໂສດສະດັບທຳຢູ່

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ທ່ານພຣະສາຣີບຸດນີ້ຊີ້ແຈ່ງໃຫ້ ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ດ້ວຍວາຈາຊາວເມືອງ ທີ່ສະລະສະລວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ສ່ວນພິກຂຸເຫຼົ່ານັ້ນຕ່າງກໍໃສ່ໃຈໃຫ້ສຳເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງ່ຽງໂສດສະດັບທຳຢູ່ ທາງທີ່ດີເຮົາຄວນສັນເສີນທ່ານພຣະສາຣີບຸດດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະໜ້າເທີ້ນ

ລຳດັບນັ້ນ ທ່ານພຣະວັງຄີສະລຸກຂຶ້ນຈາກອາສະນະ ຫົ່ມຜ້າບ່ຽງບ່າ ປະນົມມືໄປທາງທີ່ທ່ານພຣະສາຣີບຸດຢູ່ ໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານພຣະສາຣີບຸດ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພະເຈົ້າ ທ່ານພຣະສາຣີບຸດ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພະເຈົ້າ

ທ່ານພຣະສາຣີບຸດ ກ່າວກັບທ່ານພຣະວັງຄີສະວ່າ ເນື້ອຄວາມນັ້ນ ຈົ່ງຜາກົດແກ່ທ່ານເທີ້ນ ທ່ານວັງຄີສະ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ສັນເສີນທ່ານພຣະສາຣີບຸດ ດ້ວຍຄາຖາທັງຫຼາຍ ອັນສົມຄວນໃນບ່ອນສະເພາະໜ້າ ວ່າ

ທ່ານພຣະສາຣີບຸດ ເປັນນັກປາດ
ມີປັນຍາເລິກເຊິ່ງ ສະຫຼາດໃນທາງແລະບໍ່ແມ່ນທາງ
ມີປັນຍາຫຼາຍ ສະແດງທຳແກ່ພິກຂຸທັງຫຼາຍ
ສະແດງໂດຍຫຍໍ້ກໍໄດ້ ໂດຍພິດສະດານກໍໄດ້

ສຽງທີ່ເປ່ງອອກມ່ວນ ຄື ສຽງນົກສາລິກາ

ປະຕິພານກໍຜາກົດ
ເມື່ອທ່ານສະແດງທຳນັ້ນຢູ່
ພິກຂຸທັງຫຼາຍໄດ້ຟັງສຽງອັນມ່ວນ
ກໍມີຈິດແຈ່ມໃສເບີກບານດ້ວຍສຽງທີ່ໜ້າຍິນດີ
ໜ້າຟັງ ມ່ວນຈັບໃຈ ຈຶ່ງພາກັນຕັ້ງໃຈຟັງ[១]

**ສາຣີປຸດຕະສູດທີ ໖ ຈົບ**

## ៧. ປະວາຣະນາສູດ

### ວ່າດ້ວຍການປະວາຣະນາ

[໔໑໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງປະທັບຢູ່ບຸບພາຣາມ ຜາສາດຂອງນາງວິສາຂາມິຄາຣະມາຕາ ເຂດນະຄອນສາວັດຖີ ພ້ອມກັບພິກຂຸສົງໝູ່ໃຫຍ່ ປະມານ ໕໐໐ ອົງ ລ້ວນແຕ່ເປັນພຣະອະຣະຫັນ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມີພິກຂຸສົງ ຮ້ອມລ້ອມປະທັບນັ່ງຢູ່ບ່ອນກາງແຈ້ງ ເພື່ອຊົງປະວາຣະນາໃນມື້ອຸໂປສົດ ໑໕ ຄ່ຳ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງກວດເບິ່ງພິກຂຸສົງຜູ້ນັ່ງສະງົບງຽບ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ບັດນີ້ ເຮົາຂໍປະວາຣະນາຕໍ່ທ່ານທັງຫຼາຍ ທ່ານທັງຫຼາຍຈະບໍ່ຕິຕຽນກຳອັນໃດ ໆ ອັນເປັນໄປທາງກາຍ ຫຼື ທາງວາຈາຂອງເຮົາແດ່ບໍ?

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດລຸກຂຶ້ນຈາກອາສະນະຫົ່ມຜ້າບ່ຽງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍຕິຕຽນກຳອັນໃດ ໆ ອັນເປັນໄປທາງພຣະກາຍ ຫຼື ທາງພຣະວາຈາຂອງພຣະຜູ້ມີພຣະພາກເຈົ້າບໍ່ໄດ້ເລີຍ ຍ້ອນວ່າ ພຣະຜູ້ມີພຣະພາກເຈົ້າ ຊົງເປັນຜູ້ສະແດງທາງທີ່ຍັງບໍ່ອຸບັດໃຫ້ອຸບັດ ຊົງສະແດງທາງທີ່ຍັງບໍ່ເກີດໃຫ້ເກີດ ຊົງບອກທາງທີ່ຍັງບໍ່ມີຜູ້ບອກ ເປັນຜູ້ຊົງຮູ້ທາງ ຊົງຮູ້ແຈ້ງທາງ ຊົງສະຫຼາດໃນທາງ ຂ້າແດ່ ພຣະອົງຜູ້ຈະເລີນ ສາວົກທັງຫຼາຍໃນບັດນີ້ເປັນຜູ້ຍ່າງຕາມທາງ ບັດນີ້ ຂ້າພຣະອົງຂໍປະວາຣະນາຕໍ່ພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າຈະບໍ່ຊົງຕິຕຽນກຳອັນໃດ ໆ ອັນເປັນໄປທາງກາຍຫຼືທາງວາຈາຂອງຂ້າພຣະອົງແດ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ສາຣີບຸດ ເຮົາຕິຕຽນກຳອັນໃດ ໆ ອັນເປັນໄປທາງກາຍ ຫຼື ທາງວາຈາຂອງທ່ານບໍ່ໄດ້ເລີຍ ທ່ານເປັນບັນດິດ ມີປັນຍາຫຼາຍ ມີປັນຍາກວ້າງຂວາງ ມີປັນຍາແຈ່ມໃສ ມີປັນຍາແລ່ນໄປ ມີປັນຍາແຫຼມຄົມ ມີປັນຍາທຳລາຍກິເລດ[១] ສາຣີບຸດ ໂອຣົດ

ອົງໃຫຍ່ຂອງພຣະເຈົ້າຈັກກະພັດ ຍັງຈັກອັນພຣະຣາຊະບິດາຊົງໃຫ້ເປັນໄປແລ້ວໃຫ້ເປັນໄປຕາມໄດ້ໂດຍຖືກຕ້ອງ ສັນໃດ ທ່ານກໍຄືກັນສັນນັ້ນ ຍັງທຳມະຈັກອັນປະເສີດ ອັນເຮົາໃຫ້ເປັນໄປແລ້ວໃຫ້ເປັນໄປຕາມໄດ້ໂດຍຖືກຕ້ອງຢ່າງແທ້ຈິງ

ທ່ານພຣະສາຣີບຸດຈຶ່ງຂາບທູນອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຫາກວ່າພຣະຜູ້ມີພຣະພາກບໍ່ຊົງຕິຕຽນກຳອັນໃດ ໆ ອັນເປັນໄປທາງກາຍ ຫຼື ທາງວາຈາຂອງຂ້າພຣະອົງ ພຣະຜູ້ມີພຣະພາກເຈົ້າຈະບໍ່ຊົງຕິຕຽນກຳອັນໃດ ໆ ອັນເປັນໄປທາງກາຍ ຫຼື ທາງວາຈາຂອງ ພິກຂຸ ໕໐໐ ອົງເຫຼົ່ານີ້ແດ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ສາຣີບຸດ ເຮົາບໍ່ຕິຕຽນກຳອັນໃດ ໆ ອັນເປັນໄປທາງກາຍ ຫຼື ທາງວາຈາຂອງພິກຂຸ ໕໐໐ ອົງແມ່ນເຫຼົ່ານີ້ ຍ້ອນບັນດາພິກຂຸ ໕໐໐ ອົງເຫຼົ່ານີ້ ພິກຂຸ ໖໐ ອົງເປັນຜູ້ໄດ້ວິດຊາ ໓ ອີກ ໖໐ ອົງໄດ້ອະພິນຍາ ໖ ອີກ ໖໐ ອົງໄດ້ອຸພະໂຕພາຄະວິມຸດຕິ[១] ສ່ວນທີ່ເຫຼືອເປັນຜູ້ໄດ້ປັນຍາວິມຸດຕິ

ຄັ້ງນັ້ນ ທ່ານພຣະວັງຄີສະລຸກຂຶ້ນຈາກອາສະນະ ຫົ່ມຜ້າບ່ຽງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ ຂ້າແດ່ ພຣະສຸຄົຕ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເນື້ອຄວາມນັ້ນ ຈົ່ງຜາກົດແກ່ທ່ານເທີ້ນ ວັງຄີສະ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ທູນສັນເສີນພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະພຣະພັກ ວ່າ

ໃນມື້ ໑໕ ຄ່ຳ ເຊິ່ງເປັນມື້ວິສຸດທິປະວາຣະນາ
ມື້ນີ້ ມີພິກຂຸ ໕໐໐ ອົງມາປະຊຸມກັນ
ລ້ວນເປັນຜູ້ຕັດກິເລດເຄື່ອງມັດຄືສັງໂຍດໄດ້ຂາດ
ບໍ່ມີທຸກ ສິ້ນພົບສິ້ນຊາດແລ້ວ
ເປັນຜູ້ສະແຫວງຫາຄຸນນະທຳອັນປະເສີດ

ພຣະເຈົ້າຈັກກະພັດມີໝູ່ອຳມາດຮ້ອມລ້ອມ
ສະເດັດປະພາດແຜ່ນດິນອັນໄພສານ
ມີມະຫາສະມຸດສາຄອນເປັນຂອບເຂດນີ້ ສັນໃດ
ສາວົກທັງຫຼາຍມີວິດຊາ ໓ ລະມັດຈຸໄດ້ແລ້ວ

ພາກັນຮ້ອມລ້ອມພຣະຜູ້ມີພຣະພາກເຈົ້າຜູ້ຊົງຊະນະສົງຄາມ
ຊົງນຳໝູ່ ເປັນຜູ້ປະເສີດ ກໍສັນນັ້ນ

ສາວົກທັງປວງລ້ວນເປັນບຸດຂອງພຣະຜູ້ມີພຣະພາກເຈົ້າ
ໃນສາວົກນີ້ບໍ່ມີຄວາມວ່າງເປົ່າ (ຈາກຄຸນນະທຳ) ເລີຍ
ຂ້າພຣະອົງເພິ່ງຖວາຍອະພິວາດພຣະອົງ
ຜູ້ເປັນເຜົ່າພັນແຫ່ງດວງອາທິດ
ເຊິ່ງຊົງທຳລາຍລູກສອນຄືຕັນຫາໄດ້ແລ້ວ[๑]

**ປະວາຣະນາສູດທີ ໗ ຈົບ**

## ໘. ປະໂຣສະຫັດສະສູດ

### ວ່າດ້ວຍພິກຂຸກວ່າ ໑,໐໐໐ ອົງ

[໔໑໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ພ້ອມກັບພິກຂຸສົງໝູ່ໃຫຍ່ ໑,໒໕໐ ອົງ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ອັນປະກອບດ້ວຍນິບພານ ສ່ວນພິກຂຸເຫຼົ່ານັ້ນ ຕ່າງກໍໃສ່ໃຈໃຫ້ສຳເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງຽງໂສດສະດັບທຳຢູ່

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ພຣະຜູ້ມີພຣະພາກເຈົ້ານີ້ຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ອັນປະກອບດ້ວຍນິບພານ ສ່ວນພິກຂຸເຫຼົ່ານັ້ນ ຕ່າງກໍໃສ່ໃຈໃຫ້ສຳເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງຽງໂສດສະດັບທຳຢູ່ ທາງທີ່ດີເຮົາຄວນຈະສັນເສີນພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະພຣະພັກເຫິ້ນ

ຄັ້ງນັ້ນ ທ່ານພຣະວັງຄີສະລຸກຂຶ້ນຈາກອາສະນະ ຫົ່ມຜ້າບ່ຽງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ ຂ້າແດ່ ພຣະສຸຄົດ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເນື້ອຄວາມນັ້ນ ຈົ່ງຜາກົດແກ່ທ່ານເທີ້ນ ວັງຄີສະ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ທູນສັນເສີນພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະພຣະພັກ ວ່າ

ພິກຂຸກວ່າ ໑,໐໐໐ ອົງ ເຂົ້າໄປເຝົ້າພຣະສຸຄົດ
ຜູ້ຊົງສະແດງພຣະທຳອັນປາສະຈາກທຸລີ
ຄືນິບພານອັນບໍ່ມີໄພແຕ່ບ່ອນໃດ ໆ

ພິກຂຸທັງຫຼາຍຟັງທຳອັນປາສະຈາກມົນທິນ
ເຊິ່ງພຣະສຳມາສຳພຸດທະເຈົ້າຊົງສະແດງແລ້ວ
ພຣະສຳມາສຳພຸດທະເຈົ້າຜູ້ມີໝູ່ພິກຂຸຮ້ອມລ້ອມຊົງງົດງາມແທ້

ພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າ ນາຄະ
ເປັນພຣະລືສີຜູ້ສູງສຸດກວ່າລືສີທັງຫຼາຍ
ຊົງໂຮຍຝົນອະມະຕະທຳ ໃຫ້ຕົກຣົດພຣະສາວົກທັງຫຼາຍ

ຂ້າແດ່ ພຣະມະຫາວີຣະເຈົ້າ ວັງຄີສະສາວົກຂອງພຣະອົງ
ປະສົງຈະເຝົ້າພຣະສາດສະດາຈຶ່ງອອກຈາກບ່ອນພັກກາງເວັນ
ມາຖວາຍບັງຄົມພຣະບາດທັງສອງຂອງພຣະອົງ໋

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ວັງຄີສະ ຄາຖາເຫຼົ່ານີ້ ທ່ານຮິ່ນຕອງໄວ້ກ່ອນແລ້ວຫຼື ຜາກົດແກ່ທ່ານໂດຍທັນທີທັນໃດ

ທ່ານພຣະວັງຄີສະທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄາຖາເຫຼົ່ານີ້ຂ້າພຣະອົງບໍ່ໄດ້ຮິ່ນຕອງໄວ້ກ່ອນເລີຍ ແຕ່ຜາກົດແກ່ຂ້າພຣະອົງໂດຍທັນທີທັນໃດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ວັງຄີສະ ຂໍໃຫ້ຄາຖາທີ່ທ່ານບໍ່ໄດ້ຮິ່ນຕອງໄວ້ກ່ອນເຫຼົ່ານີ້ຈົ່ງຜາກົດແກ່ທ່ານຍິ່ງ ໆ ຂຶ້ນໄປເທີ້ນ

ທ່ານພຣະວັງຄີສະທູນຮັບສະໜອງພຣະດຳຣັດແລ້ວ ໄດ້ທູນສັນເສີນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາທັງຫຼາຍ ເຊິ່ງຕົນບໍ່ໄດ້ຮິ່ນຕອງໄວ້ກ່ອນ ຍິ່ງຂຶ້ນໄປອີກ ວ່າ

ພຣະສຳມາສຳພຸດທະເຈົ້າຊົງຄອບງຳທາງເປັນທີ່ເກີດຂຶ້ນແຫ່ງມານ
ຊົງທຳລາຍກິເລດເຄື່ອງຕຶງໃຈຄືຕະປູຢູ່
ທ່ານທັງຫຼາຍຈົ່ງເບິ່ງພຣະສຳມາສຳພຸດທະເຈົ້າ

ຜູ້ຊົງທຳການປິດເປື້ອງກິເລດເປັນເຄື່ອງມັດ
ຜູ້ອັນຕັນຫາ ມານະແລະທິດຖິອິງອາໄສບໍ່ໄດ້
ຜູ້ຊົງຈຳແນກທຳເປັນສ່ວນ ໆ ໄດ້ນັ້ນ

ຄວາມຈິງ ພຣະສຳມາສຳພຸດທະເຈົ້າ
ໄດ້ຕັດທາງໄວ້ຫຼາຍຢ່າງເພື່ອຖອນໂອຄະກິເລດ
ຫາກພຣະສຳມາສຳພຸດທະເຈົ້າຕັດທາງອະມະຕະນັ້ນໄວ້ແລ້ວ

ພິກຂຸທັງຫຼາຍຜູ້ເຫັນທຳ ກໍຕັ້ງໝັ້ນບໍ່ຫວັ່ນໄຫວ
ພຣະສຳມາສຳພຸດທະເຈົ້າຜູ້ເຮັດແສງສະຫວ່າງໃຫ້ເກີດ ຊົງຮູ້ແຈ່ມແຈ້ງ
ໄດ້ເຫັນນິບພານເປັນເຫດລ່ວງພົ້ນວິນຍານຖິຕິໄດ້ທັງໝົດ

ເມື່ອຊົງຮູ້ແລະເຮັດໃຫ້ແຈ້ງຈຶ່ງໄດ້ສະແດງທຳອັນເລີດ
ແກ່ພິກຂຸຜູ້ເດີນທາງໄກ ໑໐ ອົງ
ເມື່ອພຣະສຳມາສຳພຸດທະເຈົ້າ ຊົງສະແດງທຳໄວ້ດີແນວນີ້
ທ່ານຜູ້ຮູ້ແຈ້ງທຳທັງຫຼາຍຈະມີຄວາມຜະໝາດໄດ້ແນວໃດ?

ຍ້ອນເຫດນັ້ນແລ ພິກຂຸຜູ້ບໍ່ຜະໝາດໃນຄຳສອນຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເພິ່ງຕັ້ງໃຈສຶກສາຢູ່ສະເໝີ໑

**ປະໂຣສະຫັດສະສູດທີ ໗ ຈົບ**

# ໘. ໂກນທັນຍະສູດ

## ວ່າດ້ວຍພຣະອັນຍາໂກນທັນຍະ

[໔໑໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ທ່ານພຣະອັນຍາໂກນທັນຍະໄດ້ເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເຊິ່ງທ່ານບໍ່ໄດ້ເຂົ້າເຝົ້າດົນແລ້ວ ໄດ້ໝອບລົງແທບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຈູບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າແລ້ວ ບີບນວດດ້ວຍມືທັງສອງແລະປະກາດຊື່ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຊື່ວ່າໂກນທັນຍະ ຂ້າແດ່ພຣະສຸຄົດ ຂ້າພຣະອົງຊື່ວ່າໂກນທັນຍະ ຂ້ານ້ອຍ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ທ່ານພຣະອັນຍາໂກນທັນຍະນີ້ ດົນ ໆ ຈຶ່ງຈະໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ໄດ້ໝອບລົງແທບພຣະບາດທັງສອງຂອງພຣະຜູ້

ມີພຣະພາກເຈົ້າດ້ວຍຂະໝ່ອມ ຈູບພຣະບາດທັງສອງແລ້ວ ບີບນວດດ້ວຍມືທັງສອງແລະປະກາດຊື່ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຊື່ວ່າໂກນທັນຍະ ຂ້າແດ່ ພຣະສຸຄົດຂ້າພຣະອົງຊື່ວ່າ ໂກນທັນຍະ ທາງທີ່ດີເຮົາຄວນສັນເສີນທ່ານພຣະອັນຍາໂກນທັນຍະ ດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າເທີ້ນ

ຄັ້ງນັ້ນ ທ່ານພຣະວັງຄີສະລຸກຂຶ້ນຈາກອາສະນະ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ ຂ້າແດ່ ພຣະສຸຄົຕ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເນື້ອຄວາມນັ້ນຈົ່ງຜາກົດແກ່ທ່ານເທີ້ນ ວັງຄີສະ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ສັນເສີນທ່ານພຣະອັນຍາໂກນທັນຍະ ດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ວ່າ

ທ່ານພຣະອັນຍາໂກນທັນຍະເຖຣະ ຜູ້ຕັດສະຣູ້ຕາມພຣະພຸດທະເຈົ້າ
ໄດ້ມີຄວາມບາກບັ່ນຢ່າງແຮງກ້າ
ໄດ້ວິເວກເຊິ່ງເປັນທຳເຄື່ອງຢູ່ເປັນສຸກເປັນປະຈຳ
ເປັນຜູ້ບໍ່ຜະໝາດ ສຶກສາຢູ່ ໄດ້ບັນລຸສິ່ງທີ່ພຣະສາວົກ
ຜູ້ເຮັດຕາມຄຳສອນຂອງພຣະສາດສະດາຈະເພິ່ງບັນລຸໄດ້ທຸກອົງ

ທ່ານພຣະອັນຍາໂກນທັນຍະເຖຣະມີອານຸພາບຫຼາຍ
ໄດ້ບັນລຸວິດຊາ ໓ ສະຫຼາດໃນເຈໂຕປະຣິຍະຍານ
ເປັນພຸດທະທາຍາດ ຖວາຍອະພິວາດພຣະບາດທັງສອງຂອງພຣະສາດສະດາຢູ່[๑]

**ໂກນທັນຍະສູດທີ ໙ ຈົບ**

# ໑໐. ໂມກຄັນລານະສູດ

## ວ່າດ້ວຍພຣະໂມກຄັນລານະ

[໔໑໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ວິຫານກາລີລາຂ້າງພູອິສີຄິລິ ເຂດນະຄອນຣາດຊະຄຶ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ລ້ວນແຕ່ ເປັນພຣະອະຣະຫັນ ໄດ້ຂ່າວວ່າ ທ່ານພຣະມະຫາໂມກຄັນລານະໃຊ້ຈິດຂອງທ່ານຕາມພິຈາລະນາຈິດຂອງພິກຂຸເຫຼົ່ານັ້ນທີ່ລຸດພົ້ນ ບໍ່ມີອຸປະທິໄດ້?

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ພຣະຜູ້ມີພຣະພາກເຈົ້ານີ້ປະທັບຢູ່ວິຫານກາສີລາ ຂ້າງພູອິສິຄິລິ ເຂດນະຄອນຣາດຊະຄື ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ປະມານ ໕໐໐ ອົງ ລ້ວນແຕ່ເປັນພຣະອະຣະຫັນ ທ່ານພຣະມະຫາໂມກຄັນລານະໃຊ້ຈິດຂອງ ທ່ານຕາມພິຈາລະນາຈິດຂອງພິກຂຸເຫຼົ່ານັ້ນທີ່ລຸດພົ້ນ ບໍ່ມີອຸປະທິ ທາງທີ່ດີເຮົາຄວນສັນເສີນ

ທ່ານພຣະມະຫາໂມກຄັນລານະ ດ້ວຍຄາຖາທັງຫຼາຍ ອັນສົມຄວນໃນບ່ອນສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ

ຄັ້ງນັ້ນ ທ່ານພຣະວັງຄີສະລຸກຂຶ້ນຈາກອາສະນະ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງ ທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະຜູ້ມີພຣະພາກ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ ຂ້າແດ່ ພຣະສຸຄົດ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເນື້ອຄວາມນັ້ນ ຈົ່ງຜາກົດແກ່ທ່ານເທີ້ນ ວັງຄີສະ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ສັນເສີນທ່ານພຣະມະຫາໂມກຄັນລານະ ດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ພຣະສາວົກທັງຫຼາຍຜູ້ບັນລຸວິດຊາ ໓ ລະມັດຈຸໄດ້
ພາກັນຮ້ອມລ້ອມພຣະມະຫາມຸນີຜູ້ເຖິງຝັ່ງແຫ່ງທຸກ
ປະທັບນັ່ງຢູ່ຂ້າງພູ

ທ່ານພຣະມະຫາໂມກຄັນລານະຜູ້ມີລິດຫຼາຍ
ໃຊ້ຈິດພິຈາລະນາກຳນົດຮູ້ຈິດຂອງພຣະຂີນາສົບເຫຼົ່ານັ້ນ
ທີ່ລຸດພົ້ນ ບໍ່ມີອຸປະທິໄດ້
ພຣະຂີນາສົບເຫຼົ່ານັ້ນ ພາກັນຮ້ອມລ້ອມພຣະມະຫາມຸນີໂຄດົມ
ຜູ້ຊົງສົມບູນດ້ວຍສົມບັດທຸກປະການ
ຊົງເຖິງຝັ່ງແຫ່ງທຸກ ພຽບພ້ອມດ້ວຍພຣະຄຸນຫຼາຍຢ່າງ໌

**ໂມກຄັນລານະສູດທີ ໑໐ ຈົບ**

# ໑໑. ຄັກຄະຣາສູດ

## ວ່າດ້ວຍເລື້ອງເກີດຂຶ້ນທີ່ສະໂບກຂະຣະນີຊື່ຄັກຄະຣາ

[໔໑໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຝັ່ງສະໂບກຂະຣະນີ ຊື່ຄັກຄະຣາ ເຂດນະຄອນຈຳປາ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ອຸປາສົກປະມານ ໗໐໐ ຄົນ ອຸປາສິກາປະມານ ໗໐໐ ຄົນ ແລະ ເທວະດາຫຼາຍພັນອົງ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າມີພຣະວັນນະ ແລະ ມີພຣະຍົດຮຸ່ງເຮືອງກວ່າພິກຂຸ ອຸປາສົກ ອຸປາສິກາ ແລະ ເທວະດາເຫຼົ່ານັ້ນທັງໝົດ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ມີຄວາມຄິດດັ່ງນີ້ວ່າ ພຣະຜູ້ມີພຣະພາກເຈົ້ານີ້ປະທັບຢູ່ທີ່ຝັ່ງສະໂບກຂະຣະນີ ຊື່ຄັກຄະຣາ ເຂດນະຄອນຈຳປາ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ອຸປາສົກປະມານ ໗໐໐ ຄົນ ອຸປາສິກາປະມານ ໗໐໐ ຄົນ ແລະ ເທວະດາຫຼາຍພັນອົງ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າ ມີພຣະວັນນະແລະມີພຣະຍົດຮຸ່ງເຮືອງກວ່າພິກຂຸ ອຸປາສົກ ອຸປາສິກາແລະເທວະດາເຫຼົ່ານັ້ນທັງໝົດ ທາງທີ່ດີເຮົາຄວນສັນເສີນພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາທັງຫຼາຍອັນສົມຄວນໃນບ່ອນສະເພາະພຣະພັກເທີ້ນ

ຄັ້ງນັ້ນ ທ່ານພຣະວັງຄີສະລຸກຂຶ້ນຈາກອາສະນະ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ ຂ້າແດ່ພຣະສຸຄົຕ ເນື້ອຄວາມນີ້ຍ່ອມຜາກົດແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ເນື້ອຄວາມນັ້ນຈົ່ງຜາກົດແກ່ທ່ານເທີ້ນ ວັງຄີສະ

ຄັ້ງນັ້ນ ທ່ານພຣະວັງຄີສະໄດ້ທູນສັນເສີນພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາອັນສົມຄວນໃນທີ່ສະເພາະພຣະພັກ ວ່າ

ຂ້າແດ່ ພຣະມະຫາມຸນີອັງຄີຣະສະ
ພຣະອົງໄພໂຣດລ່ວງໂລກທັງໝົດດ້ວຍພຣະຍົດ
ຄືດວງຈັນແລະດວງອາທິດທີ່ປາສະຈາກມົນທິນ
ຮຸ່ງສະຫວ່າງແຈ້ງຢູ່ເທິງທ້ອງຟ້າທີ່ປາສະຈາກກ້ອນເຝື້ອໝອກ[๑]

**ຄັກຄະຣາສູດທີ ໑໑ ຈົບ**

# ໑໔. ວັງຄີສະສູດ

## ວ່າດ້ວຍພຣະວັງຄີສະ

[໔໔໐] ສະໄໝໜຶ່ງ ທ່ານພຣະວັງຄີສະຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະວັງຄີສະບັນລຸອະຣະຫັຕແລ້ວບໍ່ດົນ ສະເຫວີຍວິມຸດຕິສຸກຢູ່ ໄດ້ກ່າວຄາຖາເຫຼົ່ານີ້ໃນເວລານັ້ນ ວ່າ

ໃນການກ່ອນ ເຮົາເປັນຜູ້ມົວເມົາກາບກອນ
ໄດ້ທ່ຽວໄປແລ້ວທຸກເຮືອນທຸກເມືອງ
ຕໍ່ມາ ເຮົາໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ສັດທາກໍເກີດຂຶ້ນແກ່ເຮົາ

ພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ໄດ້ຊົງສະແດງທຳ ຄື ຂັນ ອາຍະຕະນະ ທາດ ແກ່ເຮົາ
ເຮົາໄດ້ຟັງພຣະທຳຂອງພຣະອົງແລ້ວຈຶ່ງບວດ

ພຣະມຸນີໄດ້ຕັດສະຣູ້ພຣະໂພທິຍານ
ເພື່ອປະໂຫຍດແກ່ຊົນເປັນຈຳນວນຫຼາຍ
ແກ່ພິກຂຸແລະພິກຂຸນີທັງຫຼາຍຜູ້ໄດ້ບັນລຸ ໄດ້ເຫັນນິຍາມທຳ໌
ການມາໃນສຳນັກຂອງພຣະພຸດທະເຈົ້າຂອງເຮົາເປັນການມາດີແລ້ວ
ວິດຊາ ໓ ອັນເຮົາໄດ້ບັນລຸແລ້ວໂດຍລຳດັບ
ຄຳສອນຂອງພຣະພຸດທະເຈົ້າເຮົາໄດ້ເຮັດແລ້ວ
ເຮົາຮູ້ຂັນທະສັນດານອັນເຮົາເຄີຍຢູ່ໃນການກ່ອນ
ທິບພະຈັກຂຸຍານ ເຮົາເຮັດໃຫ້ໝົດຈົດແລ້ວ
ເຮົາເປັນຜູ້ສຳເລັດວິດຊາ ໓ ບັນລຸອິດທິວິທິຍານ ສະຫຼາດໃນເຈໂຕປະຣິຍະຍານ

**ວັງຄີສະສູດທີ ໑໔ ຈົບ**

**ວັງຄີສະສັງຍຸດ ຈົບບໍລິບູນ**

## ລວມພຣະສູດທີ່ ມີໃນສັງຍຸດນີ້ ຄື



# ໙. ວະນະສັງຍຸດ

## ໑. ວິເວກະສູດ

### ວ່າດ້ວຍຄວາມສະຫງັດ

[໔໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພິກຂຸອົງໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ແຄວັນໂກສົນ ສະໄໝນັ້ນ ພິກຂຸນັ້ນພັກຜ່ອນຢູ່ໃນບ່ອນພັກກາງເວັນ ນຶກເຖິງອະກຸສົນວິຕົກອັນຊົ່ວຊາມ ເຊິ່ງອິງອາໄສການຄອງເຮືອນ

ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ພິກຂຸນັ້ນ ປະສົງຈະໃຫ້ທ່ານສະຫຼົດໃຈ ຈຶ່ງເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ແລ້ວ ກ່າວກັບພິກຂຸນັ້ນດ້ວຍຄາຖາວ່າ

ທ່ານຕ້ອງການຄວາມສະຫງັດຈຶ່ງເຂົ້າປ່າ
ສ່ວນໃຈຂອງທ່ານກັບທຽວໄປພາຍນອກ
ທ່ານເປັນຄົນ ຈົ່ງກຳຈັດຄວາມພໍໃຈໃນຄົນ
ແຕ່ນັ້ນທ່ານປາສະຈາກຄວາມກຳໜັດແລ້ວ ຈັກມີຄວາມສຸກ

ທ່ານມີສະຕິ ເປັນຫຍັງບໍ່ລະຄວາມຍິນດີນໍ
ເຮົາເຕືອນໃຫ້ທ່ານຣະນຶກເຖິງທຳຂອງສັດຕະບຸຣຸດ
ຍ້ອນທຸລິຄືກິເລດເໝືອນບາດານຂ້າມໄດ້ຍາກ
ຄວາມກຳໜັດໃນກາມຢ່າໄດ້ຄອບງຳທ່ານເລີຍ

ນ້ຳທີ່ເປື້ອນຝຸ່ນ ຍ່ອມກຳຈັດລະອອງທຸລີທີ່ເປິເປື້ອນໃຫ້ຕົກໄປ ສັນໃດ
ພິກຂຸຜູ້ມີຄວາມພຽນ ມີສະຕິ ຍ່ອມກຳຈັດລະອອງທຸລີຄືກິເລດ
ທີ່ເປິເປື້ອນໃຫ້ຕົກໄປ ສັນນັ້ນ

ລຳດັບນັ້ນ ພິກຂຸນັ້ນ ຖືກເທວະດານັ້ນ ເຮັດໃຫ້ສະຫຼົດໃຈ ເກີດຄວາມສະຫຼົດໃຈແລ້ວ

**ວິເວກະສູດທີ ໑ ຈົບ**

# ໘. ອຸປັດຖານະສູດ

## ວ່າດ້ວຍເທວະດາເຕືອນພິກຂຸຜູ້ເຂົ້າພັກຜ່ອນໃນບ່ອນພັກກາງເວັນ

[໘໘໘] ສະໄໝໜຶ່ງ ພິກຂຸອົງໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ແຄວັນໂກສົນ ສະໄໝນັ້ນພິກຂຸນັ້ນ ນອນຫຼັບໃນບ່ອນພັກກາງເວັນ

ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ພິກຂຸນັ້ນ ປະສົງຈະໃຫ້ທ່ານສະຫຼົດໃຈ ຈຶ່ງເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ ແລ້ວໄດ້ກ່າວກັບພິກຂຸນັ້ນດ້ວຍຄາຖາ ວ່າ

ທ່ານຈົ່ງລຸກຂຶ້ນເທີ້ນພິກຂຸ ຈະນອນເຮັດຫຍັງ?
ມີປະໂຫຍດອັນໃດດ້ວຍການຫຼັບ
ທ່ານຮ້ອນຮົນຍ້ອນກິເລດ ຖືກລູກສອນສຽບແທງດິ້ນຮົນຢູ່
ມົວຫຼັບຢູ່ເຮັດຫຍັງ
ທ່ານອອກບວດດ້ວຍສັດທາໃດ
ຈົ່ງເພີ່ມພູນສັດທານັ້ນເທີ້ນ
ຢ່າຕົກໄປສູ່ອຳນາດແຫ່ງຄວາມຫຼັບເລີຍ

ພິກຂຸນັ້ນກ່າວຄາຖາເຫຼົ່ານີ້ວ່າ

ຄົນຈົ໊າໝົກມຸ້ນຢູ່ໃນກາມາຣົມເຫຼົ່າໃດ
ກາມາຣົມເຫຼົ່ານັ້ນບໍ່ທ່ຽງ ບໍ່ໝັ້ນຍືນ
ຄວາມຫຼັບຈະເພິ່ງແຜດເຜົາບັນພະຊິດຜູ້ພົ້ນແລ້ວ
ຜູ້ບໍ່ກ່ຽວຂ້ອງໃນກາມາຣົມເຊິ່ງຈະຍັງສັດໃຫ້ຕິດຢູ່ ໄດ້ແນວໃດ
ຍ້ອນກຳຈັດສັນທະຣາຄະໄດ້ ແລະຍ້ອນກ້າວລ່ວງອະວິດຊາໄດ້
ຍານນັ້ນຈຶ່ງບໍລິສຸດຢ່າງຍິ່ງ

ການຫຼັບຈະແຜດເຜົາບັນພະຊິດ ໄດ້ແນວໃດ
ຄວາມຫຼັບຈະເພິ່ງແຜດເຜົາບັນພະຊິດຜູ້ບໍ່ມີຄວາມເສົ້າໂສກ
ບໍ່ມີຄວາມຄັບແຄ້ນໃຈ ຍ້ອນທຳລາຍອະວິດຊາໄດ້ດ້ວຍວິດຊາ
ແລະຍ້ອນສິ້ນອາສະວະແລ້ວ ໄດ້ແນວໃດ
ຄວາມຫຼັບຈະເພິ່ງແຜດເຜົາບັນພະຊິດ
ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຢູ່
ມີຄວາມພຽນໝັ້ນຄົງເປັນປະຈຳ ຜູ້ຫວັງນິບພານຢູ່ ໄດ້ແນວໃດ

**ອຸປັດຖານະສູດທີ ໘ ຈົບ**

# ໙. ກັດສະປະໂຄດຕະສູດ

## ວ່າດ້ວຍພຣະກັດສະປະໂຄດ

[໘໘໙] ສະໄໝໜຶ່ງ ທ່ານພຣະກັດສະປະໂຄດຢູ່ແຄມປ່າແຫ່ງໜຶ່ງ ແຄວ້ນໂກສົນ ສະໄໝນັ້ນ ທ່ານພັກຜ່ອນຢູ່ໃນບ່ອນພັກກາງເວັນ ໄດ້ກ່າວສອນນາຍພານເນື້ອຄົນໜຶ່ງ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ທ່ານພຣະກັດສະປະໂຄດ ປະສົງຈະໃຫ້ທ່ານສະຫຼົດໃຈ ຈຶ່ງເຂົ້າໄປຫາແລ້ວໄດ້ກ່າວກັບທ່ານພຣະກັດສະປະໂຄດດ້ວຍຄາຖາ ວ່າ

ພິກຂຸຜູ້ກ່າວສອນນາຍພານເນື້ອ
ເຊິ່ງທ່ຽວໄປຕາມຮ່ອມພູ ຜູ້ມີປັນຍາໜ້ອຍ
ບໍ່ຮູ້ເຫດຜົນ ໃນເວລາບໍ່ຄວນ
ຍ່ອມຜາກົດແກ່ເຮົາເໝືອນຄົນຈ້ຳ
ເຂົາເປັນຄົນໂງ່ ເຖິງຟັງທຳຢູ່ກໍບໍ່ເຂົ້າໃຈເນື້ອຄວາມນັ້ນ
ເຖິງມີປະທີບສະຫວ່າງຢູ່ກໍບໍ່ເຫັນ
ເມື່ອທ່ານກ່າວທຳຢູ່ ຍ່ອມບໍ່ຮູ້ເນື້ອຄວາມແຫ່ງທຳນັ້ນ
ຂ້າແດ່ ທ່ານກັດສະປະ
ເຖິງແມ່ນທ່ານຖືປະທີບອັນສະຫວ່າງ ໑໐ ດວງ
ເຂົາກໍຈັກບໍ່ແນມເຫັນຮູບ ຍ້ອນເຂົາບໍ່ມີຈັກຂຸ

ລຳດັບນັ້ນ ທ່ານພຣະກັດສະປະໂຄດຖືກເທວະດານັ້ນ ເຮັດໃຫ້ສະຫຼົດໃຈ ເກີດຄວາມສະຫຼົດໃຈແລ້ວ

**ກັດສະປະໂຄດຕະສູດທີ ໙ ຈົບ**

# ໔. ສຳພະຫຸລະສູດ

## ວ່າດ້ວຍພິກຂຸຫຼາຍອົງ

[໘໘໔] ສະໄໝໜຶ່ງ ພິກຂຸຫຼາຍອົງຢູ່ແຄມປ່າແຫ່ງໜຶ່ງ ແຄວັ້ນໂກສົນ ຄັ້ງນັ້ນ ພິກຂຸເຫຼົ່ານັ້ນຢູ່ຈຳພັນສາຖ້ວນໄຕຣມາດແລ້ວ ກໍໜີໄປສູ່ທີ່ຈາຣິກ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ເມື່ອບໍ່ເຫັນພິກຂຸເຫຼົ່ານັ້ນກໍໄຫ້ຈົ່ມເຖິງ ໄດ້ກ່າວຄາຖານີ້ໃນ ເວລານັ້ນ ວ່າ

ຄວາມເບື່ອໃຍຍ່ອມຜາກົດຄືຄວາມບໍ່ຍິນດີ
ຍ້ອນເຫັນອາສະນະຫວ່າງຫຼາຍໃຫ້ສະຫງັດ
ສາວົກຂອງພຣະສະມະນະໂຄດົມເຫຼົ່ານັ້ນ
ຜູ້ມີຄຳເວົ້າມ່ວນ ເປັນພະຫູສູດ ໄປຢູ່ໃສນໍ?

ເມື່ອເທວະດານັ້ນກ່າວແນວນີ້ແລ້ວ ເທວະດາອີກອົງໜຶ່ງ ໄດ້ກ່າວກັບເທວະດານັ້ນດ້ວຍຄາຖາ ວ່າ

ພິກຂຸທັງຫຼາຍ ບໍ່ຕິດໃນບ່ອນຢູ່
ທ່ຽວໄປເປັນໝູ່ ຄື ໝູ່ລິງ
ໄປສູ່ແຄວັ້ນມະຄົດແລະແຄວັ້ນໂກສົນ
ລາງພວກກໍໄປສູ່ແຄວັ້ນວັດຊີ

**ສຳພະຫຸລະສູດທີ ໔ ຈົບ**

# ໕. ອານັນທະສູດ

## ວ່າດ້ວຍພຣະອານົນ

[໘໘໕] ສະໄໝໜຶ່ງ ທ່ານພຣະອານົນຢູ່ແຄມປ່າແຫ່ງໜຶ່ງ ແຄວັ້ນໂກສົນ ສະໄໝນັ້ນທ່ານພຣະອານົນຢູ່ຮັບແຂກຝ່າຍຄະຫຼືຫັດຫຼາຍເກີນເວລາ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ທ່ານພຣະອານົນ ປະສົງຈະໃຫ້ ທ່ານສະຫຼົດໃຈ ຈຶ່ງເຂົ້າໄປຫາທ່ານຮອດບ່ອນຢູ່ແລ້ວໄດ້ກ່າວກັບທ່ານພຣະອານົນດ້ວຍຄາຖາ ວ່າ

ທ່ານພຣະອານົນໂຄຕະມະໂຄດ
ທ່ານຈົ່ງເຂົ້າໄປສູ່ສຸມທຸມພຸ່ມໄມ້ ກໍານົດນິບພານໄວ້ໃນໃຈ

ເພ່ງຊານຢູ່ຢ່າຜະໝາດເລີຍ
ສຽງວິພາກວິຈານຂອງຄົນຈະຊ່ອຍອັນໃດທ່ານໄດ້

**ອານັນທະສູດທີ ໕ ຈົບ**

# ໖. ອະນຸຣຸດທະສູດ

## ວ່າດ້ວຍພຣະອະນຸຣຸດທະ

[໔໔໖] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະຢູ່ແຄມປ່າແຫ່ງໜຶ່ງ ແຄວ້ນໂກສົນ ຄັ້ງນັ້ນ ເທວະດາຊັ້ນຕາວະຕິງສາອົງໜຶ່ງຊື່ ຊາລິນີ ເຄີຍເປັນພັນລະຍາເກົ່າຂອງທ່ານພຣະອະນຸຣຸດທະ ເຂົ້າໄປຫາທ່ານພຣະອະນຸຣຸດທະຮອດບ່ອນຢູ່ ແລ້ວໄດ້ກ່າວກັບທ່ານພຣະອະນຸຣຸດທະດ້ວຍຄາຖາວ່າ

ທ່ານຈົ່ງຕັ້ງຈິດຂອງທ່ານໄວ້ໃນໝູ່ເທບຊັ້ນຕາວະຕິງສາ
ເຊິ່ງພ້ອມພຽງດ້ວຍອາລົມອັນໜ້າຕ້ອງການທັງປວງ
ທີ່ທ່ານເຄີຍຢູ່ມາໃນການກ່ອນ
ທ່ານຜູ້ອັນໝູ່ເທບຍ້ອງຍໍຮ້ອມລ້ອມເປັນບໍລິວານຈະງົດງາມ

ທ່ານພຣະອະນຸຣຸດທະກ່າວຄາຖານີ້ ວ່າ

ເຫຼົ່ານາງເທບກັນຍາຜູ້ມີຄະຕິອັນບໍ່ແນ່ນອນ
ດຳລົງໝັ້ນຢູ່ໃນສັກກາຍະທິດຖິ
ສັດທັງຫຼາຍຜູ້ມີຄະຕິອັນບໍ່ທ່ຽງແທ້ແມ່ນເຫຼົ່ານັ້ນ
ກໍຍັງມີນາງເທບກັນຍາປາຖະໜາ

ເທວະດານັ້ນກ່າວດ້ວຍຄາຖານີ້ ວ່າ

ເທບເຫຼົ່າໃດຍັງບໍ່ເຄີຍເຫັນສວນນັນທະນະວັນ
ອັນເປັນບ່ອນຢູ່ຂອງພວກນະຣະເທບ ຜູ້ມີຍົດ ຊັ້ນໄຕຣທິດ
ເທບເຫຼົ່ານັ້ນຍັງບໍ່ຮູ້ຈັກຄວາມສຸກ

ທ່ານພຣະອະນຸຣຸດທະກ່າວດ້ວຍຄາຖານີ້ ວ່າ

ເທວະດາ ທ່ານບໍ່ຮູ້ແຈ້ງຄຳເວົ້າ
ຂອງພຣະອະຣະຫັນທັງຫຼາຍວ່າ ສັງຂານທັງປວງບໍ່ທ່ຽງ

มีความเกิดขึ้นและความเสื่อมไปเป็นทำมะดา
เกิดขึ้นแล้วย่อมดับไป
ความสะงบละงับสังขานเຫຼົ່ານั้นเป็นความสุก

บัดนี้ กานกับไปยู่ในสะหวันຂອງเຮົາบ่มีອີກต่ไป
ตันหาคືตาໜ່າງໃນໝູ່ເທບຂອງເຮົາບໍ່ມີ
ການວຽນວ່າຍຕາຍເກີດສິ້ນໄປແລ້ວ ບັດນີ້ ພົບໃໝ່ບໍ່ມີອີກຕໍ່ໄປ

**ອະນຸຣຸດທະສູດທີ ໖ ຈົບ**

# ໗. ນາຄະທັດຕະສູດ

## ວ່າດ້ວຍພຣະນາຄະທັດຕະ

[໔໔໗] ສະໄໝໜຶ່ງ ທ່ານພຣະນາຄະທັດຕະຢູ່ແຄມປ່າແຫ່ງໜຶ່ງ ແຄວັ້ນໂກສົນ ສະໄໝນັ້ນ ທ່ານພຣະນາຄະທັດຕະເຂົ້າໄປສູ່ໝູ່ບ້ານແຕ່ເຊົ້າ ແລະ ກັບມາຫຼັງທ່ຽງ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ທ່ານພຣະນາຄະທັດຕະ ປະສົງຈະໃຫ້ທ່ານສະຫຼົດໃຈ ຈຶ່ງເຂົ້າໄປຫາທ່ານພຣະນາຄະທັດຕະຮອດບ່ອນຢູ່ ແລ້ວໄດ້ກ່າວກັບທ່ານພຣະນາຄະທັດຕະດ້ວຍຄາຖາ ວ່າ

ທ່ານພຣະນາຄະທັດຕະ ທ່ານເຂົ້າໄປສູ່ໝູ່ບ້ານຕອນເຊົ້າ
ແລະກັບມາຕອນກາງເວັນ
ທ່ານທ່ຽວໄປເກີນເວລາອັນສົມຄວນ ຄຸກຄີກັບຄະຫຼືຫັດ
ຮ່ວມສຸກຮ່ວມທຸກກັບເຂົາ ເຮົາຢ້ານວ່າທ່ານພຣະນາຄະທັດຕະ
ຈະເປັນຜູ້ຄະນອງກາຍໃຈ ພົວພັນໃນຕະກູນທັງຫຼາຍ

ຂໍທ່ານຢ່າຕົກໄປສູ່ອຳນາດຂອງມັດຈຸຣາດຜູ້ມີກຳລັງ
ຜູ້ເຮັດຊີວິດໃຫ້ສິ້ນສຸດເລີຍ

ລຳດັບນັ້ນ ທ່ານພຣະນາຄະທັດຕະຖືກເທວະດານັ້ນ ເຮັດໃຫ້ສະຫຼົດໃຈ ເກີດຄວາມສະຫຼົດໃຈແລ້ວ

**ນາຄະທັດຕະສູດທີ ໗ ຈົບ**

# ໗. ກຸລະຄະຣະນີສູດ

## ວ່າດ້ວຍຍິງແມ່ເຮືອນໃນຕະກູນ

[໔໔໗] ສະໄໝໜຶ່ງ ພິກຂຸອົງໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ແຄວ້ນໂກສົນ ສະໄໝນັ້ນ ພິກຂຸນັ້ນໄປຢູ່ຄຸກຄີໃນຕະກູນແຫ່ງໜຶ່ງເກີນເວລາ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ພິກຂຸນັ້ນ ປະສົງຈະໃຫ້ທ່ານສະຫຼົດໃຈ ຈຶ່ງເນຣະມິດເພດເປັນຍິງແມ່ເຮືອນໃນຕະກູນນັ້ນ ເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ແລ້ວໄດ້ກ່າວກັບພິກຂຸນັ້ນດ້ວຍຄາຖາ ວ່າ

ຊົນທັງຫຼາຍ ຕ່າງປະຊຸມສົນທະນາກັນທີ່ໃກ້ຝັ່ງແມ່ນໍ້າ
ໃນສາລາທີ່ພັກ ໃນສະພາແລະຂ້າງ ໆ ຖະໜົນ
ພວກເຂົາຕ່າງເວົ້າເຖິງເຮົາແລະທ່ານແນວໃດນໍ?

ພິກຂຸນັ້ນກ່າວຄາຖານີ້ ວ່າ

ແທ້ຈິງ ສຽງທີ່ເປັນຂ້າເສິກມີຫຼາຍ
ທ່ານຜູ້ມີຕະບະຕ້ອງອົດທົນ ບໍ່ຕ້ອງເກີ້ເຂີນດ້ວຍເຫດນັ້ນ
ຍ້ອນວ່າສັດບໍ່ໄດ້ເສົ້າໝອງດ້ວຍເຫດນັ້ນ
ແຕ່ຜູ້ໃດມັກສະດຸ້ງຍ້ອນສຽງ ເໝືອນເນື້ອຊາຍໃນປ່າ
ນັກປາດຮຽກຜູ້ນັ້ນວ່າມີໃຈເບົາ
ຂໍ້ວັດປະຕິບັດຂອງເຂົາຍ່ອມບໍ່ສົມບູນ

**ກຸລະຄະຣະນີສູດທີ ໗ ຈົບ**

# ໘. ວັດຊີປຸດຕະສູດ

## ວ່າດ້ວຍພິກຂຸວັດຊີບຸດ

[໔໔໘] ສະໄໝໜຶ່ງ ພິກຂຸວັດຊີບຸດອົງ ໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ເຂດນະຄອນເວສາລີ ສະໄໝນັ້ນ ໃນນະຄອນເວສາລີ ໄດ້ມີການລະຫຼິ້ນມະໂຫລະສົບຕະຫຼອດທັງຄືນ ຄັ້ງນັ້ນ ພິກຂຸນັ້ນໄດ້ຟັງສຽງດົນຕີທີ່ບຸກຄົນບັນເລງກ້ອງກັງວານຢູ່ໃນນະຄອນເວສາລີ ຮໍ່າໄຮຢູ່ ໄດ້ກ່າວຄາຖານີ້ ໃນເວລານັ້ນ ວ່າ

ເຮົາຢູ່ໃນປ່າຄົນດຽວ
ຄືຂອນໄມ້ທີ່ເຂົາຖິ້ມປະໄວ້ໃນປ່າ

ໃໝ່ບໍ? ຈະທຸກຍາກກວ່າເຮົາໃນຣາຕີແນວນີ້

ລຳດັບນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ທ່ານ ປະສົງຈະໃຫ້ພິກຂຸນັ້ນສະຫຼົດໃຈ ຈຶ່ງເຂົ້າໄປຫາພິກຂຸນັ້ນ ຮອດບ່ອນຢູ່ແລ້ວໄດ້ກ່າວກັບພິກຂຸນັ້ນດ້ວຍຄາຖາ ວ່າ

ທ່ານຢູ່ໃນປ່າຄົນດຽວ
ຄືຂອນໄມ້ທີ່ເຂົາຖິ້ມປະໄວ້ໃນປ່າ
ໃຫ້ຮູ້ວ່າມີເທວະດາແລະມະນຸດເປັນຈຳນວນຫຼາຍຍັງຮັກທ່ານຢູ່
ຄືສັດນະຣົກຍິນດີຕໍ່ຜູ້ທີ່ຈະໄດ້ໄປສູ່ສະຫວັນ ສັນນັ້ນ໑

ລຳດັບນັ້ນ ພິກຂຸນັ້ນ ຖືກເທວະດາເຮັດໃຫ້ສະຫຼົດໃຈ ເກີດຄວາມສະຫຼົດໃຈແລ້ວ

**ວັດຊີປຸດຕະສູດທີ ໙ ຈົບ**

# ໑໐. ສັດຊາຍະສູດ

## ວ່າດ້ວຍພິກຂຸຜູ້ສາທະຍາຍທຳ

[໔໑໐] ສະໄໝໜຶ່ງ ພິກຂຸອົງໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ແຄວັນໂກສົນ ສະໄໝນັ້ນ ພິກຂຸນັ້ນແຕ່ກ່ອນສາທະຍາຍຫຼາຍຈົນເກີນເວລາ ສະໄໝຕໍ່ມາ ທ່ານມີການຂົນຂວາຍໜ້ອຍຢູ່ຊື່ ໆ ປ່ອຍໃຫ້ເວລາລ່ວງເລີຍໄປລ່າ ໆ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ບໍ່ໄດ້ຟັງທຳຂອງພິກຂຸນັ້ນ ຈຶ່ງເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ແລ້ວ ໄດ້ກ່າວກັບພິກຂຸນັ້ນດ້ວຍຄາຖາ ວ່າ

ພິກຂຸ ຍ້ອນເຫດໃດ ທ່ານເມື່ອຢູ່ຮ່ວມກັບພິກຂຸທັງຫຼາຍ
ຈຶ່ງບໍ່ສາທະຍາຍບົດແຫ່ງທຳ
ຍ້ອນບຸກຄົນຟັງທຳແລ້ວ ຍ່ອມເຫຼື້ອມໃສ
ແລະສັນເສີນໃນປັດຈຸບັນ

ພິກຂຸນັ້ນໄດ້ກ່າວຄາຖານີ້ ວ່າ

ຄວາມພໍໃຈໃນບົດແຫ່ງທຳທັງຫຼາຍ
ໄດ້ມີແລ້ວໃນການກ່ອນ ຈົນເຖິງເວລາທີ່ເຮົາມາຢູ່ຮ່ວມ
ກັບບຸກຄົນຜູ້ປາສະຈາກຣາຄະ
ແລະຍ້ອນຕັ້ງແຕ່ເຮົາມາຢູ່ຮ່ວມກັບບຸກຄົນຜູ້ປາສະຈາກຣາຄະ

ສັດຕະບຸຣຸດທັງຫຼາຍຮູ້ທົ່ວເຖິງຮູບ ສຽງ ກິ່ນ ຣົດ
ແລະໂຜດຖັບພະ ແນວໃດແນວໜຶ່ງແລ້ວ
ຈຶ່ງໄດ້ກ່າວເຖິງການປ່ອຍວາງອາລົມນັ້ນ ໆ

**ສັດຊາຍະສູດທີ ໑໐ ຈົບ**

# ໑໑. ອະໂຍນິໂສມະນະສິການສູດ

## ວ່າດ້ວຍການມະນະສິການໂດຍບໍ່ແຍບຄາຍ

[໔໓໑] ສະໄໝໜຶ່ງ ພິກຂຸອົງໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ແຄວັ້ນໂກສົນ ສະໄໝນັ້ນ ທ່ານພັກຜ່ອນຢູ່ໃນບ່ອນພັກກາງເວັນ ນຶກເຖິງອະກຸສົນວິຕົກອັນຊົ່ວຊາມ ຄື ການວິຕົກ (ຄວາມນຶກກ່ຽວກັບການ) ພະຍາບາດວິຕົກ (ຄວາມນຶກກ່ຽວກັບພະຍາບາດ) ແລະວິຫິງສາວິຕົກ (ຄວາມນຶກກ່ຽວກັບວິຫິງສາ) ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ພິກຂຸນັ້ນ ປະສົງຈະໃຫ້ພິກຂຸນັ້ນສະຫຼົດໃຈ ຈຶ່ງເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ແລ້ວໄດ້ກ່າວກັບພິກຂຸນັ້ນດ້ວຍຄາຖາ ວ່າ

ທ່ານຖືກວິຕົກເກາະກິນ ຍ້ອນມະນະສິການໂດຍບໍ່ແຍບຄາຍ
ທ່ານຈົ່ງລະການມະນະສິການໂດຍບໍ່ແຍບຄາຍ
ແລະຈົ່ງພິຈາຣະນາໂດຍແຍບຄາຍເທີ້ນ

ທ່ານຜາຣົບພຣະສາດສະດາ ພຣະທຳ ພຣະສົງ
ແລະສີນຂອງຕົນແລ້ວ ຈະບັນລຸຄວາມປາໂມດ ປີຕິ
ແລະຄວາມສຸກໂດຍບໍ່ຕ້ອງສົງໄສ
ຈາກນັ້ນ ທ່ານຫຼາຍໄປດ້ວຍຄວາມປາໂມດ
ຈັກກະທຳທີ່ສຸດແຫ່ງທຸກໄດ້

ລຳດັບນັ້ນ ພິກຂຸນັ້ນ ຖືກເທວະດາເຮັດໃຫ້ສະຫຼົດໃຈ ເກີດຄວາມສະຫຼົດໃຈແລ້ວ

**ອະໂຍນິໂສມະນະສິການສູດທີ ໑໑ ຈົບ**

# ໑໘. ມັດຊັນຫິກະສູດ

## ວ່າດ້ວຍເວລາທ່ຽງວັນ

[໔໓໘] ສະໄໝໜຶ່ງ ພິກຂຸອົງໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ແຄວັນໂກສົນ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພິກຂຸນັ້ນ ວ່າ

ເມື່ອຝູງນົກພາກັນພັກຮ້ອນຢູ່ໃນເວລາທ່ຽງເວັນ
ປ່າໃຫຍ່ສົ່ງສຽງຄືກັບວ່າຄວນຄາງຢູ່
ສຽງຄວນຄາງແຫ່ງປ່າໃຫຍ່ນັ້ນ
ຜາກົດເປັນສິ່ງທີ່ເປັນຕາຢ້ານແກ່ຂ້າພະເຈົ້າ໋

ພິກຂຸນັ້ນກ່າວຄາຖານີ້ ວ່າ

ເມື່ອຝູງນົກພາກັນພັກຮ້ອນຢູ່ໃນເວລາທ່ຽງວັນ
ປ່າໃຫຍ່ສົ່ງສຽງຄືກັບວ່າຄວນຄາງຢູ່
ສຽງຄວນຄາງແຫ່ງປ່າໃຫຍ່ນັ້ນ
ຜາກົດເປັນສິ່ງທີ່ໜ້າຍິນດີແກ່ເຮົາ໋

**ມັດຊັນຫິກະສູດທີ ໑໘ ຈົບ**

# ໑໙. ປາກະຕິນທະຣິຍະສູດ

## ວ່າດ້ວຍພິກຂຸຜູ້ບໍ່ສັງລວມອິນຊີ

[໔໓໙] ສະໄໝໜຶ່ງ ພິກຂຸຈຳນວນຫຼາຍຢູ່ແຄມປ່າແຫ່ງໜຶ່ງ ແຄວັນໂກສົນ ເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າຈາພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີຕໍ່ພິກຂຸເຫຼົ່ານັ້ນ ປະສົງຈະໃຫ້ພິກຂຸເຫຼົ່ານັ້ນສະຫຼົດໃຈ ຈຶ່ງເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ ໄດ້ກ່າວກັບພິກຂຸເຫຼົ່ານັ້ນດ້ວຍຄາຖາ ວ່າ

ໃນການກ່ອນ ພວກພິກຂຸສາວົກຂອງພຣະໂຄດົມ
ເປັນຢູ່ງ່າຍ ບໍ່ມັກຫຼາຍການສະແຫວງຫາບິນທະບາດ
ບໍ່ມັກຫຼາຍສະແຫວງຫາບ່ອນນອນບ່ອນນັ່ງ

ທ່ານຮູ້ວ່າສິ່ງທັງປວງໃນໂລກເປັນຂອງບໍ່ທ່ຽງ
ຈຶ່ງຈະເຮັດບ່ອນສຸດແຫ່ງທຸກໄດ້
ສ່ວນທ່ານເຫຼົ່ານີ້ເຮັດຕົນເປັນຄົນລ້ຽງຍາກ
ກິນ ໆ ແລ້ວກໍນອນ ຄືຄົນທີ່ໂກງຊາວບ້ານ
ໝົກມຸ້ນຢູ່ໃນເຮືອນຂອງຄົນອື່ນ
ຂ້າພະເຈົ້າທຳອັນຊະລີຕໍ່ສົງແລ້ວ
ຂໍເວົ້າກັບທ່ານລາງພວກໃນບ່ອນນີ້ວ່າ
ພວກທ່ານຖືກເຂົາປະຖິ້ມແລ້ວ ເປັນຄົນອະນາຖາຄືເຜດ
ຂ້າພະເຈົ້າກ່າວໝາຍເອົາບຸກຄົນພວກທີ່ຜະໝາດຢູ່
ສ່ວນທ່ານເຫຼົ່າໃດບໍ່ຜະໝາດ
ຂ້າພະເຈົ້າຂໍນອບນ້ອມແດ່ທ່ານເຫຼົ່ານັ້ນ[໑]

ລຳດັບນັ້ນ ພິກຂຸເຫຼົ່ານັ້ນຖືກເທວະດານັ້ນເຮັດໃຫ້ສະຫຼົດໃຈ ເກີດຄວາມສະຫຼົດໃຈແລ້ວ

**ປາກະຕິນທະຣິຍະສູດທີ ໑໓ ຈົບ**

## ໑໔. ປະທຸມະປຸບຜະສູດ

## ວ່າດ້ວຍດອກບົວ

[໔໓໔] ສະໄໝໜຶ່ງ ພິກຂຸອົງໜຶ່ງຢູ່ແຄມປ່າແຫ່ງໜຶ່ງ ແຄວ້ນໂກສົນ ສະໄໝນັ້ນ ພິກຂຸນັ້ນກັບຈາກບິນທະບາດ ພາຍຫຼັງຈາກສັນພັດຕາຫານສຳເລັດແລ້ວ ລົງສູ່ສະໂບກຂະຣະນີ ສູດດົມກິ່ນດອກບົວ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນແຄມປ່ານັ້ນ ມີຄວາມອະນຸເຄາະຫວັງດີ ຕໍ່ພິກຂຸນັ້ນ ປະສົງຈະໃຫ້ພິກຂຸນັ້ນສະຫຼົດໃຈ ຈຶ່ງເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ແລ້ວໄດ້ກ່າວກັບພິກຂຸນັ້ນດ້ວຍຄາຖາວ່າ

ທ່ານສູດດົມກິ່ນດອກບົວ
ທີ່ເກີດໃນນ້ຳ ເຊິ່ງໃຜ ໆ ບໍ່ໄດ້ຖວາຍແລ້ວ
ນີ້ເປັນອົງອັນໜຶ່ງແຫ່ງຄວາມເປັນຄົນຂີ້ລັກ
ທ່ານຜູ້ນິຣະທຸກ ທ່ານເປັນຜູ້ລັກກິ່ນ

ພິກຂຸນັ້ນໄດ້ກ່າວດ້ວຍຄາຖາວ່າ

ເຮົາບໍ່ໄດ້ນຳໄປ ເຮົາບໍ່ໄດ້ຫັກ

ເຮົາພຽງແຕ່ດົມກິ່ນດອກບົວທີ່ເກີດໃນນໍ້າທ່າງ ໆ
ເມື່ອເປັນແນວນີ້ ທ່ານຈະຮຽກເຮົາວ່າ
ເປັນຜູ້ລັກກິ່ນ ດ້ວຍເຫດອັນໃດນໍ?
ສ່ວນບຸກຄົນທີ່ຂຸດເຫງົ້າບົວ ຫັກດອກບົວປຸນທະຣິກະ
ເປັນຜູ້ມີການງານອັນບໍ່ບໍລິສຸດ
ເປັນຫຍັງ? ທ່ານຈຶ່ງບໍ່ຮຽກເຮົາວ່າເປັນຄົນຂີ້ລັກນໍ

ເທວະດາກ່າວດ້ວຍຄາຖາ ວ່າ

ບຸຣຸດຜູ້ມີບາບໜາ ເປິເປື້ອນດ້ວຍກິເລດ
ມີຣາຄະເປັນຕົ້ນເກີນເຫດ
ເຮົາບໍ່ໄດ້ເວົ້າເຖິງຄົນອື່ນ ແຕ່ເຮົາເວົ້າກັບທ່ານ
ບາບປະມານທໍ່ປາຍຂົນເນື້ອຊາຍ
ຍ່ອມຜາກົດເໝືອນທໍ່ກ້ອນເຟື້ອໃນນະພາກາດ
ແກ່ບຸຣຸດຜູ້ບໍ່ມີກິເລດພຽງດັ່ງເນີນ
ຜູ້ມັກສະແຫວງຫາຄວາມສະອາດ໑ເປັນປະຈຳ

ພິກຂຸນັ້ນກ່າວດ້ວຍຄາຖາ ວ່າ

ຍັກ ທ່ານຕ້ອງຮູ້ຈັກເຮົາແນ່
ແລະທ່ານຄົງອະນຸເຄາະເຮົາ
ຍັກ ທ່ານເຫັນກຳແນວນີ້ໃນການໃດ
ຂໍທ່ານເພິ່ງກ່າວໃນການນັ້ນອີກເທີ້ນ

ເທວະດາກ່າວດ້ວຍຄາຖາ ວ່າ

ເຮົາບໍ່ໄດ້ອາໄສທ່ານເປັນຢູ່ເລີຍ
ແລະເຮົາກໍບໍ່ໄດ້ມີຄວາມຈະເລີນຍ້ອນທ່ານ
ພິກຂຸ ທ່ານນັ້ນແລ ເພິ່ງໄປສູ່ສຸຄະຕິດ້ວຍກຳທີ່ທ່ານເພິ່ງຮູ້ເທີ້ນ

ລຳດັບນັ້ນ ພິກຂຸນັ້ນ ຖືກເທວະດານັ້ນເຮັດໃຫ້ສະຫຼົດໃຈ ເກີດຄວາມສະຫຼົດໃຈແລ້ວ

**ປະທຸມະປຸບຜະສູດທີ ໑໔ ຈົບ**

**ວະນະສັງຍຸດ ຈົບບໍລິບູນ**

### ລວມພຣະສູດທີ່ ມີໃນສັງຍຸດນີ້ ຄື



# ໑໐. ຍັກຂະສັງຍຸດ

## ໑. ອິນທະກະສູດ

### ວ່າດ້ວຍອິນທະກະຍັກ

[໔໒໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູອິນທະກູດ ເຊິ່ງເປັນພິບຂອງອິນທະກະຍັກ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ອິນທະກະຍັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ຜູ້ຮູ້ທັງຫຼາຍກ່າວວ່າ ຮູບບໍ່ແມ່ນຊີວະ
ສັດນີ້ຈະມີຮ່າງກາຍນີ້ໄດ້ແນວ ໃດນໍ?
ກະດູກແລະກ້ອນຊີ້ນມາຈາກໄສ
ສັດນີ້ຈະຢູ່ໃນທ້ອງໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຮູບນີ້ເປັນກະລະລະ[໑]ກ່ອນ
ຈາກກະລະລະເກີດເປັນອັບພຸທະ[໒]
ຈາກອັບພຸທະເກີດເປັນເປສີ (ຕ່ອນຊີ້ນນ້ອຍ)
ຈາກເປສີເກີດເປັນຄະນະ (ເປັນກ້ອນ)

ຈາກຄະນະເກີດເປັນປຸ່ມ ໕ ປຸ່ມ[໓] ຕໍ່ຈາກນັ້ນ

ຜົມ ຂົນແລະເລັບ ຈຶ່ງເກີດຂຶ້ນ
ມານດາຂອງສັດຜູ້ຢູ່ໃນທ້ອງນັ້ນ
ບໍຣິໂພກເຂົ້ານ້ຳໂພຊະນາຫານແນວໃດ?
ສັດຜູ້ຢູ່ໃນທ້ອງມານດານັ້ນ
ກໍຍັງອັດຕະພາບໃຫ້ເປັນໄປໃນທ້ອງ
ດ້ວຍເຂົ້ານ້ຳໂພຊະນາຫານແນວນັ້ນ

**ອິນທະກະສູດທີ ໑ ຈົບ**

# ໘. ສັກກະສູດ

## ວ່າດ້ວຍສັກກະຍັກ

[໔໑໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເທິງພູຄິຊະກູດ ເຂດນະຄອນ ຣາດຊະຄຶ ຄັ້ງນັ້ນ ສັກກະຍັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ການສັ່ງສອນຄົນອື່ນນັ້ນ ບໍ່ເໝາະແກ່ສະມະນະເຊັ່ນທ່ານ
ຜູ້ລະກິເລດເຄື່ອງຮ້ອຍຮັດໄດ້ໝົດແລ້ວ ຜູ້ພົ້ນວິເສດແລ້ວ[໑]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ສັກກະ ທຳເຄື່ອງຢູ່ຮ່ວມກັນ
ຍ່ອມເກີດດ້ວຍເຫດແນວໃດ? ແນວໜຶ່ງ
ຄົນມີປັນຍາບໍ່ຄວນເຮັດໃຈຫວັ່ນໄຫວໄປຕາມເຫດນັ້ນ
ຖ້າຄົນມີໃຈຜ່ອງໃສແລ້ວສັ່ງສອນຄົນອື່ນ
ບຸກຄົນນັ້ນຍ່ອມບໍ່ເປັນຜູ້ກ່ຽວຂ້ອງດ້ວຍເຫດນັ້ນ
ນອກຈາກຈະອະນຸເຄາະອີດູ

**ສັກກະສູດທີ ໘ ຈົບ**

# ៙. ສູຈິໂລມະສູດ

## ວ່າດ້ວຍສູຈິໂລມະຍັກ

[໔໙໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເທິງຕຽງຊະນິດມີຕີນຢຶດຕິດກັບຕຽງ ອັນເປັນພິບຂອງສູຈິໂລມະຍັກ ໃກ້ໝູ່ບ້ານຄະຍາ ສະໄໝນັ້ນ ຂະຣະຍັກແລະສູຈິໂລມະຍັກ ຍ່າງກາຍໄປໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ຂະຣະຍັກໄດ້ເວົ້າກັບສູຈິໂລມະຍັກດັ່ງນີ້ວ່າ ນັ້ນສະມະນະ

ສູຈິໂລມະຍັກກ່າວວ່າ ນັ້ນບໍ່ແມ່ນສະມະນະ ນັ້ນເປັນສະມະນະນ້ອຍ ແຕ່ຈະເປັນສະມະນະຫຼືສະມະນະນ້ອຍ ເຮົາພໍຈະຮູ້ໄດ້

ລຳດັບນັ້ນ ສູຈິໂລມະຍັກເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ເຂົ້າໄປຈ່ອງພຣະວໍຣະກາຍຂອງພຣະອົງ ພຣະຜູ້ມີພຣະພາກເຈົ້າຊົງຖອຍພຣະວໍຣະກາຍໄປເລັກໜ້ອຍ

ຕໍ່ຈາກນັ້ນ ສູຈິໂລມະຍັກໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານຢ້ານເຮົາບໍ່ສະມະນະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຜູ້ມີອາຍຸ ເຮົາບໍ່ຢ້ານທ່ານດອກ ແຕ່ສຳຜັດຂອງທ່ານຫຍາບກະດ້າງ

ສູຈິໂລມະຍັກທູນຖາມວ່າ ສະມະນະ ເຮົາຈັກຖາມບັນຫາກັບທ່ານ ຖ້າທ່ານບໍ່ພະຍາກອນຕອບແກ່ເຮົາ ເຮົາຈັກເຮັດຈິດຂອງທ່ານໃຫ້ແຕກ ຈັກຈີກຫົວໃຈຂອງທ່ານ ຫຼື ຈັກຈັບຕີນແລ້ວດຶກໄປສູ່ຝັ່ງແມ່ນ້ຳຄົງຄາຟາກພຸ້ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຜູ້ມີອາຍຸ ເຮົາບໍ່ເຫັນໃຜເລີຍໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ທີ່ຈະເພິ່ງເຮັດຈິດຂອງເຮົາໃຫ້ແຕກ ຈີກຫົວໃຈຂອງເຮົາ ຫຼື ຈັບຕີນເຮົາແລ້ວດຶກໄປສູ່ຝັ່ງແມ່ນ້ຳຄົງຄາຟາກພຸ້ນໄດ້ ເຊີນທ່ານຖາມຕາມທີ່ທ່ານຕ້ອງການເທີ້ນ

ສູຈິໂລມະຍັກຈຶ່ງທູນຖາມດ້ວຍຄາຖານີ້ ວ່າ

ຣາຄະແລະໂທສະມີອັນໃດເປັນເຫດ
ຄວາມບໍ່ຍິນດີ[໑] ຄວາມຍິນດີ[໒]
ແລະຄວາມຂົນຫົວລຸກ[໓] ເກີດຈາກອັນໃດ
ຄວາມນຶກໃນໃຈເກີດຈາກອັນໃດ

ຍ່ອມມັດຈິດໄວ້ໄດ້ຄືພວກເດັກມັດຕົນກາໄວ້ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

ຣາຄະແລະໂທສະມີອັດຕະພາບນີ້ເປັນເຫດ
ຄວາມບໍ່ຍິນດີ ຄວາມຍິນດີ
ແລະຄວາມຂົນຫົວລຸກເກີດຈາກອັດຕະພາບນີ້
ຄວາມນຶກໃນໃຈເກີດຈາກອັດຕະພາບນີ້
ຍ່ອມມັດຈິດໄວ້ຄືພວກເດັກມັດຕົນກາໄວ້ ສັນນັ້ນ
ອະກຸສົນວິຕົກເປັນຈຳນວນຫຼາຍ
ເກີດຈາກຄວາມເຍື່ອໃຍຄືຕັນຫາ
ເກີດຂຶ້ນໃນຕົນແລ້ວແຜ່ຊ່ານໄປໃນວັດຖຸການທັງຫຼາຍ
ຄືຍອຍໄຮເກີດຈາກລຳຕົ້ນໄຮແລ້ວແຜ່ຊ່ານໄປໃນປ່າ ສັນນັ້ນ
ຊົນເຫຼົ່າໃດຮູ້ອັດຕະພາບນັ້ນວ່າເກີດຈາກສິ່ງໃດ
ຊົນເຫຼົ່ານັ້ນຍ່ອມບັນເທົາເຫດເກີດນັ້ນໄດ້
ຍັກ ທ່ານຈົ່ງຟັງ ຊົນເຫຼົ່ານັ້ນ ຍ່ອມຂ້າມຫ້ວງແຫ່ງກິເລດນີ້
ເຊິ່ງຂ້າມໄດ້ຍາກ ອັນຕົນບໍ່ເຄີຍຂ້າມເພື່ອຄວາມບໍ່ມີພົບໃໝ່ຕໍ່ໄປ໔

**ສູຈິໂລມະສູດທີ ໓ ຈົບ**

# ໔. ມະນິພັດທະສູດ

## ວ່າດ້ວຍມະນິພັດທະຍັກ

[໔໓໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຈດີຊື່ມະນິມາກະ ອັນເປັນ ພົບຂອງມະນິພັດທະຍັກ ໃນແຄວ້ນມະຄົດ ຄັ້ງນັ້ນ ມະນິພັດທະຍັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ໄດ້ກ່າວຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຄວາມຈະເລີນຍ່ອມມີແກ່ຄົນມີສະຕິທຸກເມື່ອ
ຄົນມີສະຕິຍ່ອມໄດ້ຮັບຄວາມສຸກ
ຄວາມດີຍ່ອມມີແກ່ຄົນມີສະຕິເປັນປະຈຳ
ແລະຄົນມີສະຕິຍ່ອມລຸດພົ້ນຈາກເວນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ຄວາມຈະເລີນຍ່ອມມີແກ່ຄົນມີສະຕິທຸກເມື່ອ
ຄົນມີສະຕິຍ່ອມໄດ້ຮັບຄວາມສຸກ
ຄວາມດີຍ່ອມມີແກ່ຄົນມີສະຕິເປັນປະຈຳ
ແຕ່ຄົນມີສະຕິຍັງບໍ່ລຸດພົ້ນຈາກເວນ
ສ່ວນຜູ້ໃດມີໃຈຍິນດີໃນຄວາມບໍ່ບຽດບຽນຕະຫຼອດທັງມື້ແລະຄືນ
ແລະເປັນຜູ້ມີສ່ວນແຫ່ງເມດຕາໃນສັບພະສັດ
ຜູ້ນັ້ນຍ່ອມບໍ່ມີເວນກັບໃຜ ໆ

**ມະນິພັດທະສູດທີ ໔ ຈົບ**

## ໕. ສານຸສູດ

## ວ່າດ້ວຍສາມະເນນສານຸ

[໔໖໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ບຸດຂອງອຸປາສິກາຄົນໜຶ່ງຊື່ ສານຸ ຖືກຍັກເຂົ້າສິງ ຄັ້ງນັ້ນ ອຸປາສິການັ້ນໄດ້ໄຫ້ຈົ່ມກ່າວຄາຖາເຫຼົ່ານີ້ ວ່າ

ເຮົາໄດ້ສະດັບຄຳຂອງພຣະອະຣະຫັນທັງຫຼາຍ ວ່າ
ຊົນເຫຼົ່າໃດເຂົ້າຢູ່ອຸໂປສົດອັນປະກອບ
ດ້ວຍອົງ ໘ ປະການດ້ວຍດີ ຕະຫຼອດດິຖີທີ ໑໔ ທີ ໑໕
ແລະທີ ໘ ແຫ່ງປັກ ທັງຕະຫຼອດປາຕິຫາຣິຍະປັກ
ປະພຶດພົມມະຈັນຢູ່
ຍັກທັງຫຼາຍຍ່ອມເຂົ້າສິງຊົນເຫຼົ່ານັ້ນບໍ່ໄດ້ເປັນການຖືກຕ້ອງແລ້ວ
ແລະບັດນີ້ ເຮົາໄດ້ເຫັນແລ້ວໃນມື້ນີ້ຍັກເຂົ້າສິງສາມະເນນສານຸ

ຍັກກ່າວ ວ່າ

ທ່ານໄດ້ສະດັບຄຳຂອງພຣະອະຣະຫັນທັງຫຼາຍ ວ່າ
ຊົນເຫຼົ່າໃດເຂົ້າຢູ່ຈະອຸໂປສົດອັນປະກອບ
ດ້ວຍອົງ ໘ ປະການດ້ວຍດີ ຕະຫຼອດດິຖີທີ ໑໔ ທີ ໑໕
ແລະທີ ໘ ແຫ່ງປັກ ທັງຕະຫຼອດປາຕິຫາຣິຍະປັກ
ປະພຶດພົມມະຈັນຢູ່
ຍັກທັງຫຼາຍ ຍ່ອມເຂົ້າສິງຊົນເຫຼົ່ານັ້ນບໍ່ໄດ້ເປັນການຖືກຕ້ອງແລ້ວ

ທ່ານຈົ່ງບອກສານຸຜູ້ຟື້ນຂຶ້ນແລ້ວວ່າ ຍັກສັ່ງຄຳນີ້ໄວ້ວ່າ
ທ່ານຢ່າໄດ້ທຳກຳອັນລາມົກທັງໃນກາງແຈ້ງແລະໃນບ່ອນລັບ
ຖ້າທ່ານຈັກທຳຫຼືກຳລັງກະທຳກຳອັນລາມົກ
ເຖິງທ່ານຈະເຫາະໜີໄປກໍບໍ່ພົ້ນຈາກຄວາມທຸກ

ສາມະເນນສານຸຟື້ນຂຶ້ນແລ້ວກ່າວ ວ່າ

ແມ່ອອກ ຍາດແລະມິດທັງຫຼາຍ
ຍ່ອມຮ້ອງໄຫ້ເຖິງຄົນທີ່ຕາຍໄປແລ້ວ
ຫຼື ຍັງມີຊີວິດຢູ່ແຕ່ບໍ່ຜາກົດ
ທ່ານຍັງເຫັນເຮົາເຊິ່ງມີຊີວິດຢູ່ແທ້ ໆ
ຍ້ອນເຫດໃດຈຶ່ງຮ້ອງໄຫ້ເຖິງເຮົານໍ

ອຸປາສິກາກ່າວ ວ່າ

ລູກເອີຍ ຍາດແລະມິດທັງຫຼາຍ
ຍ່ອມຮ້ອງໄຫ້ເຖິງຄົນທີ່ຕາຍໄປແລ້ວ
ຫຼື ຍັງມີຊີວິດຢູ່ແຕ່ບໍ່ຜາກົດ

ແຕ່ຄົນໃດລະກາມແລ້ວຍັງຄິດຈະກັບມາໃນກາມນີ້ອີກ
ລູກເອີຍ ຍາດແລະມິດທັງຫຼາຍຍ່ອມຮ້ອງໄຫ້ເຖິງຄົນນັ້ນ
ຍ້ອນເຂົາເປັນຢູ່ຕໍ່ໄປອີກກໍຄືຕາຍແລ້ວ

ລູກເອີຍ ເຮົາຍົກທ່ານຂຶ້ນຈາກການຄອງເຮືອນທີ່ຮ້ອນຮົນແລ້ວ
ທ່ານຍັງປາຖະໜາຈະຕົກລົງໄປສູ່ການຄອງເຮືອນອີກ

ລູກເອີຍ ເຮົາຍົກທ່ານຂຶ້ນຈາກເຫວແລ້ວ
ທ່ານຍັງປາຖະໜາຈະຕົກລົງໄປສູ່ເຫວອີກບໍ?
ເຮົາຈະໂພນທະນາແກ່ໃຜໄດ້ນໍວ່າ
ຂໍທ່ານຈົ່ງຊ່ອຍກັນ ຂໍຄວາມຈະເລີນຈົ່ງມີແກ່ທ່ານ
ຄືສິ່ງຂອງທີ່ກຂົນອອກແລ້ວຈາກເຮືອນທີ່ໄຟໄໝ້
ແຕ່ທ່ານປາຖະໜາຈະເຜົາມັນອີກ

**ສານຸສູດທີ ໔ ຈົບ**

# ໖. ປິຍັງກະຣະສູດ

## ວ່າດ້ວຍປິຍັງກະຣະຍັກ

[໔໔໐] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະອະນຸຣຸດທະລຸກຂຶ້ນໃນເວລາໃກ້ແຈ້ງແລ້ວ ສູດບົດແແຫ່ງທຳທັງຫຼາຍຢູ່ ຄັ້ງນັ້ນ ນາງຍັກສິນີຜູ້ເປັນມານດາຂອງປິຍັງກະອອຍລູກນ້ອຍແນວນີ້ ວ່າ

ປິຍັງກະ ຢ່າເຮັດສຽງດັງ
ພິກຂຸກຳລັງສູດບົດແຫ່ງທຳທັງຫຼາຍຢູ່
ເມື່ອເຮົາໄດ້ຟັງ ໄດ້ຮູ້ແຈ້ງບົດແຫ່ງທຳແລ້ວປະຕິບັດ
ຂໍ້ນັ້ນ ຈະເປັນປະໂຫຍດເກື້ອກູນແກ່ເຮົາ

ປິຍັງກະກ່າວ ວ່າ

ເຮົາບໍ່ບຽດບຽນສັດມີຊີວິດທັງຫຼາຍ
ບໍ່ກ່າວຕົວະທັງທີ່ຮູ້ຢູ່
ສຶກສາທຳຕົນໃຫ້ເປັນຄົນມີສິນດີ
ຈຶ່ງຈະພົ້ນຈາກກຳເນີດຜີສາດ[១]

**ປິຍັງກະຣະສູດທີ ໖ ຈົບ**

# ໗. ປຸນັບພະສຸສູດ

## ວ່າດ້ວຍປຸນັບພະສຸຍັກ

[໔໔໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາອັນປະກອບດ້ວຍນິບພານ ສ່ວນພິກຂຸເຫຼົ່ານັ້ນຕ່າງກໍໃສ່ໃຈໃຫ້ສຳເລັດປະໂຫຍດ ນ້ອມນຶກມາດ້ວຍຄວາມເຕັມໃຈ ງຽງໂສດສະດັບທຳຢູ່ ຄັ້ງນັ້ນ ນາງຍັກສິນີຜູ້ເປັນມານດາຂອງປຸນັບພະສຸ ອອຍລູກນ້ອຍແນວນີ້ວ່າ

ລູກອຸດຕະຣາ ເຈົ້າຈົ່ງມິດເທີ້ນ
ລູກປຸນັບພະສຸ ເຈົ້າຈົ່ງມິດເທີ້ນ
ຈົນກວ່າແມ່ຈະຟັງພຣະທຳຂອງພຣະພຸດທະເຈົ້າ
ຜູ້ປະເສີດ ຜູ້ເປັນພຣະສາດສະດາ
ພຣະຜູ້ມີພຣະພາກເຈົ້າຕັດນິບພານ
ອັນເປັນເຄື່ອງປົດຕົນຈາກກິເລດເຄື່ອງຮ້ອຍຮັດທັງປວງ
ເວລາທີ່ປາຖະໜາໃນທຳນີ້ຈະລ່ວງຜ່ານແມ່ໄປ

ລູກຂອງຕົນເປັນທີ່ຮັກໃນໂລກ
ສາມີຂອງຕົນເປັນທີ່ຮັກໃນໂລກ
ແຕ່ຄວາມປາຖະໜາໃນທຳນີ້
ເປັນທີ່ຮັກຂອງແມ່ຍິ່ງກວ່າລູກແລະສາມີນັ້ນ
ຍ້ອນວ່າລູກຫຼືສາມີທີ່ຮັກ
ຈະເພິ່ງປົດເປື້ອງແມ່ຈາກທຸກບໍ່ໄດ້

ສ່ວນການຟັງທຳຍ່ອມປົດເປື້ອງສັດທັງຫຼາຍຈາກທຸກໄດ້
ເມື່ອໂລກຖືກທຸກຄອບງຳຢູ່ ປະກອບແລ້ວດ້ວຍຊະຣາແລະມໍລະນະ
ເຮົາຕ້ອງການຟັງທຳທີ່ເຮັດໃຫ້ຕັດສະຣູ້ເພື່ອຈະພົ້ນຈາກຊະຣາແລະມໍລະນະ
ລູກປຸນັບພະສຸ ເຈົ້າຈົ່ງມິດເທີ້ນ

ປຸນັບພະສຸເວົ້າວ່າ

ແມ່ ເຮົາຈັກບໍ່ເວົ້າ ອຸດຕະຣານີ້ກໍຈັກມິດ
ທ່ານຈົ່ງໃສ່ໃຈເຖິງແຕ່ທຳ
ການຟັງພຣະສັດທຳຈົ່ງເປັນຄວາມສຸກ
ແມ່ ເຮົາບໍ່ຮູ້ພຣະສັດທຳ ຈຶ່ງໄດ້ທ່ຽວໄປລຳບາກ
ພຣະພຸດທະເຈົ້າພຣະອົງນີ້ເປັນຜູ້ທຳຄວາມສະຫວ່າງໃຫ້
ແກ່ເທວະດາແລະມະນຸດທັງຫຼາຍຜູ້ລຸ້ມຫຼົງ
ພຣະອົງເຫຼືອແຕ່ພຣະສະຣີຣະໃນຊາດສຸດທ້າຍ
ມີພຣະຈັກຂຸ ສະແດງທຳຢູ່

ຍັກສິນີເວົ້າວ່າ

ເປັນຕາດີໃຈຫຼາຍ ລູກທີ່ນອນຢູ່ເທິງເອິກເປັນຄົນສະຫຼາດ
ລູກຂອງເຮົາຍ່ອມພໍໃຈພຣະທຳຂອງພຣະພຸດທະເຈົ້າຜູ້ປະເສີດ

ປຸນັບພະສຸ ເຈົ້າຈິ່ງມີແຕ່ຄວາມສຸກເທົ້ນ
ມື້ນີ້ເຮົາເປັນຜູ້ກ້າວຂຶ້ນໄປດີແລ້ວ໑
ເຮົາແລະເຈົ້າເຫັນອະຣິຍະສັດແລ້ວ
ແມ່ນອຸດຕະຣາກໍຈິ່ງຟັງຄຳຂອງເຮົາ

**ປຸນັບພະສຸສູດທີ ໗ ຈົບ**

# ໘. ສຸທັດຕະສູດ

## ວ່າດ້ວຍຄະຫະບໍດີຊື່ສຸທັດຕະ

[໘໔໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າສີຕະວັນ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານອະນາຖະບິນທິກະຄະຫະບໍດີໄປສູ່ນະຄອນຣາດຊະຄຶ ດ້ວຍວຽກງານ ບາງຢ່າງ ທ່ານອະນາຖະບິນທິກະຄະຫະບໍດີໄດ້ສະດັບວ່າ ໄດ້ຂ່າວວ່າ ພຣະພຸດທະເຈົ້າສະເດັດອຸບັດຂຶ້ນແລ້ວໃນໂລກ ໃນຂະນະນັ້ນເອງ ກໍປາຖະໜາຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຂຶ້ນມາທັນທີ ຄັ້ງນັ້ນ ທ່ານອະນາຖະບິນທິກະຄະຫະບໍດີໄດ້ມີຄວາມຄິດດັ່ງນີ້ວ່າ ມື້ນີ້ບໍ່ແມ່ນເວລາທີ່ຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຄວນຖ້າຮອດມື້ອື່ນກ່ອນ ເຮົາຈິ່ງຈະເຂົ້າເຝົ້າ ທ່ານອະນາຖະບິນທິກະຄະຫະບໍດີນອນຮ່ຳເພິງເຖິງພຣະພຸດທະເຈົ້າເຂົ້າໃຈວ່າ ແຈ້ງແລ້ວ ຈິ່ງລຸກຂຶ້ນໃນຕອນກາງຄືນເຖິງ ໓ ເທື່ອ ລຳດັບນັ້ນ ທ່ານອະນາຖະບິນທິກະຄະຫະບໍດີຍ່າງໄປທາງປະຕູປ່າຊ້າ ພວກອະມະນຸດທັງຫຼາຍໄຂປະຕູໃຫ້ ຄັນເມື່ອທ່ານອະນາຖະບິນທິກະຄະຫະບໍດີອອກໄປຈາກເມືອງ ແສງສະຫວ່າງກໍຫາຍໄປ ຄວາມມືດຜາກົດຂຶ້ນ ຄວາມຢ້ານ ຄວາມຕື່ນຕົກໃຈ ແລະຄວາມຂົນທົວລຸກກໍເກີດຂຶ້ນຕາມມາ ທ່ານອະນາຖະບິນທິກະຄະຫະບໍດີ ຈິ່ງຕ້ອງການຈະຮີບຟ້າວກັບຈາກບ່ອນນັ້ນ ຄັ້ງນັ້ນ ສີວະກະຍັກຫາຍໂຕໄປຫາໄດ້ສົ່ງສຽງໃຫ້ໄດ້ຍິນວ່າ

ຊ້າງ ໑໐໐,໐໐໐ ເຊືອກ ມ້າ ໑໐໐,໐໐໐ ໂຕ
ລົດທຽມດ້ວຍມ້າອັດສະດອນ ໑໐໐,໐໐໐ ຄັນ
ຍິງສາວທີ່ປະດັບຕຸ້ມຫູອັນຍະມະນີ ໑໐໐,໐໐໐ ຄົນ
ຍັງບໍ່ສຳຄັນທໍ່ສ່ວນທີ ໑໖ ຂອງການຍ່າງກ້າວໄປຂ້າງໜ້າອີກບາດກ້າວໜຶ່ງ
ທ່ານຈິ່ງຍາງໄປເທີ້ນຄະຫະບໍດີ ທ່ານຈິ່ງກ້າວໄປເທີ້ນຄະຫະບໍດີ
ການກ້າວໄປຂ້າງໜ້າຂອງທ່ານປະເສີດ ການຖອຍຫຼັງບໍ່ປະເສີດເລີຍ

ຄັ້ງນັ້ນ ຄວາມມືດໄດ້ຫາຍໄປ ແສງສະຫວ່າງກໍຜາກົດຂຶ້ນແກ່ທ່ານອະນາຖະບິນທິກະຄະຫະບໍດີ ຄວາມຢ້ານ ຄວາມຕື່ນຕົກໃຈ ແລະ ຄວາມຂົນທົວລຸກກໍລະງັບໄປ

ແມ່ນເທື່ອທີ ໘ ແສງສະຫວ່າງກໍຫາຍໄປ ຄວາມມືດກໍຜາກົດຂຶ້ນແກ່ທ່ານອະນາຖະບິນທິກະຄະຫະບໍດີ ຄວາມຢ້ານ ຄວາມຕື່ນຕົກໃຈ ແລະ ຄວາມຂົນຫົວລຸກກໍບັງເກີດຂຶ້ນ ທ່ານອະນາຖະບິນທິກະຄະຫະບໍດີ ຈຶ່ງຕ້ອງການທີ່ຈະກັບຈາກທີ່ນັ້ນອີກ ແມ່ນເທື່ອທີ ໘ ສີວະກະຍັກຫາຍໂຕໄປໄດ້ສົ່ງສຽງໃຫ້ໄດ້ຍິນ ວ່າ

ຊ້າງ ໑໐໐,໐໐໐ ເຊືອກ ມ້າ ໑໐໐,໐໐໐ ໂຕ
ລົດທຽມດ້ວຍມ້າອັດສະດອນ ໑໐໐,໐໐໐ ຄັນ
ຍິງສາວທີ່ປະດັບຕຸ້ມຫູອັນຍະມະນີ ໑໐໐,໐໐໐ ຄົນ
ຍັງບໍ່ສຳຄັນທໍ່ສ່ວນທີ ໑໖ ຂອງການຍ່າງກ້າວໄປຂ້າງໜ້າອີກບາດກ້າວໜຶ່ງ
ທ່ານຈົ່ງຍາງໄປເທີ້ນຄະຫະບໍດີ ທ່ານຈົ່ງກ້າວໄປເທີ້ນຄະຫະບໍດີ
ການກ້າວໄປຂ້າງໜ້າຂອງທ່ານປະເສີດ ການຖອຍຫຼັງບໍ່ປະເສີດເລີຍ

ຄັ້ງນັ້ນ ຄວາມມືດກໍຫາຍໄປ ແສງສະຫວ່າງກໍຜາກົດຂຶ້ນແກ່ທ່ານອະນາຖະບິນທິກະຄະຫະບໍດີ ຄວາມຢ້ານ ຄວາມຕື່ນຕົກໃຈ ແລະ ຄວາມຂົນຫົວລຸກກໍລະງັບໄປ

ແມ່ນເທື່ອທີ ໙ ແສງສະຫວ່າງກໍຫາຍໄປ ຄວາມມືດກໍຜາກົດຂຶ້ນແກ່ທ່ານອະນາຖະບິນທິກະຄະຫະບໍດີ ຄວາມຢ້ານ ຄວາມຕື່ນຕົກໃຈແລະຄວາມຂົນຫົວລຸກກໍບັງເກີດຂຶ້ນ ທ່ານອະນາຖະບິນທິກະຄະຫະບໍດີຈຶ່ງຕ້ອງການທີ່ຈະກັບຈາກທີ່ນັ້ນອີກ ແມ່ນເທື່ອທີ ໙ ສີວະກະຍັກຫາຍໂຕໄປໄດ້ສົ່ງສຽງໃຫ້ໄດ້ຍິນ ວ່າ

ຊ້າງ ໑໐໐,໐໐໐ ເຊືອກ ມ້າ ໑໐໐,໐໐໐ ໂຕ
ລົດທຽມດ້ວຍມ້າອັດສະດອນ ໑໐໐,໐໐໐ ຄັນ
ຍິງສາວທີ່ປະດັບຕຸ້ມຫູອັນຍະມະນີ ໑໐໐,໐໐໐ ຄົນ
ຍັງບໍ່ສຳຄັນທໍ່ສ່ວນທີ ໑໖ ຂອງການຍ່າງກ້າວໄປຂ້າງໜ້າອີກບາດກ້າວໜຶ່ງ
ທ່ານຈົ່ງຍາງໄປເທີ້ນຄະຫະບໍດີ ທ່ານຈົ່ງກ້າວໄປເທີ້ນຄະຫະບໍດີ
ການກ້າວໄປຂ້າງໜ້າຂອງທ່ານປະເສີດ ການຖອຍຫຼັງບໍ່ປະເສີດເລີຍ

ຄັ້ງນັ້ນ ຄວາມມືດກໍຫາຍໄປ ແສງສະຫວ່າງກໍຜາກົດຂຶ້ນແກ່ທ່ານອະນາຖະບິນທິກະຄະຫະບໍດີ ຄວາມຢ້ານ ຄວາມຕື່ນຕົກໃຈ ແລະ ຄວາມຂົນຫົວລຸກກໍລະງັບໄປ ຄັ້ງນັ້ນ ທ່ານອະນາຖະບິນທິກະຄະຫະບໍດີຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງປ່າສີຕະວັນ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດລຸກຂຶ້ນໃນເວລາເຊົ້າມືດ ແລ້ວສະເດັດຈົງກົມຢູ່ໃນບ່ອນກາງແຈ້ງ ພຣະອົງໄດ້ທອດພຣະເນດເຫັນທ່ານອະນາຖະບິນທິກະຄະຫະບໍດີຜູ້ມາແຕ່ໄກ ແລ້ວສະເດັດລົງຈາກບ່ອນຈົງກົມ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດກັບ

ທ່ານອະນາຖະບິນທິກະຄະຫະບໍດີດັ່ງນີ້ວ່າ ມາເທີ້ນ ສຸທັດຕະ ຄັ້ງນັ້ນ ທ່ານອະນາຖະບິນທິກະຄະຫະບໍດີຄິດວ່າ ພຣະຜູ້ມີພຣະພາກເຈົ້າຊົງທັກເຮົາໂດຍຊື່ ຈຶ່ງເບີກບານດີໃຈໝອບລົງແທບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຂະໜ່ອມໃນບ່ອນນັ້ນເອງ ແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນ ພຣະອົງປະທັບຢູ່ເປັນສຸກບໍ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ພາມຜູ້ດັບກິເລດແລ້ວ
ຍ່ອມຢູ່ເປັນສຸກທຸກເວລາ ບໍ່ຕິດຢູ່ໃນກາມ໑
ເປັນຄົນເຢືອກເຢັນ ບໍ່ມີອຸປະກິເລດ
ຕັດກິເລດເຄື່ອງຂ້ອງທຸກຢ່າງໄດ້ແລ້ວ
ເພິ່ງກຳຈັດຄວາມກະວົນກະວາຍໃນໃຈ
ເຂົ້າເຖິງຄວາມສະງົບ ຍ່ອມຢູ່ເປັນສຸກ໑

**ສຸທັດຕະສູດທີ ໘ ຈົບ**

# ໙. ປະຖົມສຸກກາສູດ

## ວ່າດ້ວຍສຸກກາພິກຂຸນີ ສູດທີ ໑

[໔໔໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ພິກຂຸນີຊື່ ສຸກກາ ມີບໍລິສັດໝູ່ໃຫຍ່ຮ້ອມລ້ອມສະແດງທຳຢູ່ ຄັ້ງນັ້ນ ຍັກຜູ້ເຫຼື້ອມໃສຢ່າງຍິ່ງໃນສຸກກາພິກຂຸນີ ຈາກຖະໜົນນີ້ໄປສູ່ ຖະໜົນນັ້ນຈາກຮ່ອມນີ້ໄປສູ່ຮ່ອມນັ້ນ ໃນນະຄອນຣາດຊະຄຶ ໄດ້ກ່າວຄາຖາເຫຼົ່ານີ້ໃນເວລານັ້ນ ວ່າ

ພວກມະນຸດໃນນະຄອນຣາດຊະຄຶເຫຼົ່ານີ້
ເປັນຫຍັງນໍ ເອົາແຕ່ມົວດື່ມນ້ຳເຜິ້ງ ນອນຢູ່
ບໍ່ເຂົ້າໄປນັ່ງໃກ້ສຸກກາພິກຂຸນີຜູ້ສະແດງອະມະຕະບົດຢູ່
ສ່ວນພວກຄົນທີ່ມີປັນຍາ ເຂົ້າໃຈດື່ມອະມະຕະບົດນັ້ນ
ເຊິ່ງເປັນທຳບໍ່ນຳກັບຫຼັງ ເຮັດຜູ້ຟັງໃຫ້ຊຸ່ມຊື່ນ
ມີໂອຊະ ຄືບຸກຄົນເດີນທາງໄກໄດ້ດື່ມນ້ຳຝົນ໔

**ປະຖົມສຸກກາສູດທີ ໙ ຈົບ**

# ໑໐. ທຸຕິຍະສຸກາສູດ

## ວ່າດ້ວຍສຸກາພິກຂຸນີ ສູດທີ ໔

[໔໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ອຸປາສິກຄົນໜຶ່ງໄດ້ຖວາຍໂພຊະນາຫານແກ່ສຸກາພິກຂຸນີ ຄັ້ງນັ້ນ ຍັກຜູ້ເຫຼື້ອມໃສຢ່າງຍິ່ງໃນສຸກາພິກຂຸນີ ຈາກຖະໜົນນີ້ໄປສູ່ຖະໜົນນັ້ນ ຈາກຮ່ອມນີ້ໄປສູ່ຮ່ອມນັ້ນ ໃນນະຄອນຣາດຊະຄຶ ໄດ້ກ່າວຄາຖານີ້ໃນເວລານັ້ນ ວ່າ

ອຸປາສິກນີ້ມີປັນຍາ
ຖວາຍໂພຊະນາຫານແກ່ສຸກາພິກຂຸນີ
ຜູ້ລຸດພົ້ນແລ້ວຈາກກິເລດເຄື່ອງຮ້ອຍຮັດທັງປວງ
ໄດ້ປະສົບບຸນຫຼາຍນໍ

**ທຸຕິຍະສຸກາສູດທີ ໑໐ ຈົບ**

# ໑໑. ຈີຣາສູດ

## ວ່າດ້ວຍຈີຣາພິກຂຸນີ

[໔໔໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ອຸປາສິກຄົນໜຶ່ງໄດ້ຖວາຍຈີວອນແກ່ຈີຣາພິກຂຸນີ ຄັ້ງນັ້ນ ຍັກຜູ້ເຫຼື້ອມໃສຢ່າງຍິ່ງໃນຈີຣາພິກຂຸນີ ຈາກຖະໜົນນີ້ໄປສູ່ຖະໜົນນັ້ນ ຈາກຮ່ອມນີ້ໄປສູ່ຮ່ອມນັ້ນ ໃນນະຄອນຣາດຊະຄຶ ໄດ້ກ່າວຄາຖານີ້ໃນເວລານັ້ນ ວ່າ

ອຸປາສິກນີ້ມີປັນຍາ
ຖວາຍຈີວອນແກ່ຈີຣາພິກຂຸນີ
ຜູ້ລຸດພົ້ນແລ້ວຈາກກິເລດເຄື່ອງປະກອບທັງປວງ
ໄດ້ປະສົບບຸນຫຼາຍນໍ

**ຈີຣາສູດທີ ໑໑ ຈົບ**

# ໑໔. ອາລະວະກະສູດ

## ວ່າດ້ວຍອາລະວະກະຍັກ

[໔໔໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນພິບຂອງອາລະວະກະຍັກ ເຂດເມືອງອາລະວີ ຄັ້ງນັ້ນ ອາລະວະກະຍັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ກ່າວກັບພຣະຜູ້ມີ ພຣະພາກເຈົ້າດັ່ງນີ້ວ່າ ທ່ານຈົ່ງອອກມາ ສະມະນະ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ຜູ້ມີອາຍຸ ແລ້ວກໍສະເດັດອອກມາ
ອາລະວະກະຍັກກ່າວວ່າ ທ່ານຈົ່ງເຂົ້າໄປ ສະມະນະ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ຜູ້ມີອາຍຸ ແລ້ວກໍສະເດັດເຂົ້າໄປ

ແມ່ນເທື່ອທີ ໒ ອາລະວະກະຍັກໄດ້ກ່າວກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານຈົ່ງອອກມາ ສະມະນະ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ຜູ້ມີອາຍຸ ແລ້ວກໍສະເດັດອອກມາ
ອາລະວະກະຍັກກ່າວວ່າ ທ່ານຈົ່ງເຂົ້າໄປ ສະມະນະ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ຜູ້ມີອາຍຸ ແລ້ວກໍສະເດັດເຂົ້າໄປ

ແມ່ນເທື່ອທີ ໓ ອາລະວະກະຍັກໄດ້ກ່າວກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານຈົ່ງອອກມາ ສະມະນະ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ຜູ້ມີອາຍຸ ແລ້ວກໍສະເດັດອອກມາ
ອາລະວະກະຍັກກ່າວວ່າ ທ່ານຈົ່ງເຂົ້າໄປ ສະມະນະ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ຜູ້ມີອາຍຸ ແລ້ວກໍສະເດັດເຂົ້າໄປ

ແມ່ນເທື່ອທີ ໔ ອາລະວະກະຍັກໄດ້ກ່າວກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ອີກວ່າ ທ່ານຈົ່ງອອກມາສະມະນະ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ຜູ້ມີອາຍຸ ເຮົາຈັກບໍ່ອອກໄປດອກ ທ່ານຈະເຮັດຫຍັງກໍຈົ່ງເຮັດເທີ້ນ

ອາລະວະກະຍັກໄດ້ກ່າວວ່າ ສະມະນະ ເຮົາຈັກຖາມບັນຫາກັບທ່ານ ຖ້າທ່ານບໍ່ພະຍາກອນຕອບແກ່ເຮົາ ເຮົາຈັກເຮັດຈິດຂອງທ່ານໃຫ້ແຕກສະຫຼາຍ ຈັກຈີກຫົວໃຈຂອງທ່ານ ຫຼືຈັກຈັບຕີນແລ້ວດຶກໄປສູ່ຝັ່ງແມ່ນ້ຳຄົງຄາຟາກພຸ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ຜູ້ມີອາຍຸ ເຮົາຍັງແນມບໍ່ເຫັນໃຜເລີຍໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ ທີ່ຈະເພິ່ງເຮັດຈິດຂອງເຮົາໃຫ້ແຕກສະຫຼາຍໄດ້ ຈີກຫົວໃຈຂອງເຮົາ ຫຼື ຈັບຕີນເຮົາແລ້ວດຶກໄປສູ່ຝັ່ງແມ່ນ້ຳຄົງຄາຟາກພຸ້ນໄດ້ ເຊີນທ່ານຖາມຕາມທີ່ທ່ານຕ້ອງການເທີ້ນ

ອາລະວະກະຍັກຖາມ ວ່າ

ອັນໃດນໍ? ເປັນຊັບເຄື່ອງພໍໃຈ
ທີ່ປະເສີດ ຂອງບຸຣຸດໃນໂລກນີ້
ອັນໃດນໍ? ທີ່ບຸກຄົນປະພຶດດີແລ້ວ ນຳຄວາມສຸກມາໃຫ້
ອັນໃດນໍ? ມີຣົດລ້ຳເລີດກວ່າຣົດທັງຫຼາຍ
ນັກປາດທັງຫຼາຍກ່າວເຖິງຊີວິດ
ຂອງຜູ້ເປັນຢູ່ແນວໃດ? ວ່າປະເສີດສຸດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ສັດທາເປັນຊັບເຄື່ອງພໍໃຈ
ທີ່ປະເສີດ ຂອງບຸຣຸດໃນໂລກນີ້
ທຳ[໑]ທີ່ບຸກຄົນປະພຶດດີແລ້ວ ນຳຄວາມສຸກມາໃຫ້
ຄວາມສັດ ມີຣົດລ້ຳເລີດກວ່າຣົດທັງຫຼາຍ
ນັກປາດທັງຫຼາຍກ່າວເຖິງຊີວິດ
ຂອງຜູ້ເປັນຢູ່ດ້ວຍປັນຍາ ວ່າປະເສີດສຸດ

ອາລະວະກະຍັກຖາມ ວ່າ

ບຸກຄົນຂ້າມໂອຄະ[໑] ໄດ້ແນວໃດນໍ?
ຂ້າມອັນນົບ[໑] (ທະເລ) ໄດ້ແນວໃດນໍ?
ລ່ວງທຸກໄດ້ແນວໃດນໍ? ບໍລິສຸດໄດ້ແນວໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນຂ້າມໂອຄະໄດ້ດ້ວຍສັດທາ
ຂ້າມອັດນົບໄດ້ດ້ວຍຄວາມບໍ່ຜະໝາດ
ລ່ວງທຸກໄດ້ດ້ວຍຄວາມພຽນ ບໍລິສຸດໄດ້ດ້ວຍປັນຍາ

ອາລະວະກະຍັກຖາມ ວ່າ

ບຸກຄົນໄດ້ປັນຍາແນວໃດນໍ?
ເຮັດແນວໃດນໍ? ຈຶ່ງຈະຫາຊັບໄດ້
ບຸກຄົນໄດ້ກຽດຕິຍົດແນວໃດນໍ?
ເຮັດແນວໃດນໍ? ຈຶ່ງຈະຜູກມິດໄວ້ໄດ້
ບຸກຄົນລະໂລກນີ້ແລ້ວໄປສູ່ໂລກໜ້າ
ເຮັດແນວໃດນໍ? ຈຶ່ງຈະບໍ່ເສົ້າໂສກ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນເຫັນທໍາຂອງພຣະອະຣະຫັນ
ເພື່ອບັນລຸນິບພານ ບໍ່ຜະໝາດ
ມີຄວາມຮອບຄອບ ຟັງດ້ວຍດີ ຍ່ອມໄດ້ປັນຍາ

ບຸກຄົນຜູ້ທໍາການງານອັນເໝາະສົມບໍ່ຖືເບົາ
ຂະຫຍັນໝັ່ນພຽນ ຍ່ອມຫາຊັບໄດ້
ບຸກຄົນຍ່ອມໄດ້ກຽດຕິຍົດຍ້ອນຄວາມສັດ
ບຸກຄົນເມື່ອໃຫ້ຍ່ອມຜູກມິດໄວ້ໄດ້

ບຸກຄົນຢູ່ຄອງເຮືອນປະກອບດ້ວຍສັດທາ
ມີທໍາ ໔ ປະການນີ້ ຄື ສັດຈະ ທະມະ ທິຕິ ຈາຄະ
ລະໂລກນີ້ໄປແລ້ວ ຍ່ອມບໍ່ເສົ້າໂສກ

ເຊີນທ່ານຖາມສະມະນະພາມທັງຫຼາຍເຫຼົ່າອື່ນເບິ່ງເຖີດວ່າ
ໃນໂລກນີ້ມີອັນໃດທີ່ຈະຍິ່ງໄປກວ່າສັດຈະ ທະມະ ຂັນຕິ ຈາຄະ ໄດ້ນໍ

ອາລະວະກະຍັກຂາບທູນ ວ່າ

ເປັນຫຍັງນໍ ຂ້າພຣະອົງຈຶ່ງຕ້ອງຖາມສະມະນະພາມທັງຫຼາຍ
ເພາະວ່າໃນມື້ນີ້ ຂ້າພຣະອົງຮູ້ແຈ້ງເຖິງປະໂຫຍດໃນພາຍໜ້າ
ພຣະພຸດທະເຈົ້າສະເດັດມາເຖິງເມືອງອາລະວີ
ເພື່ອປະໂຫຍດແກ່ຂ້າພຣະອົງແທ້ ໆ

ໃນມື້ນີ້ ຂ້າພຣະອົງຮູ້ແຈ້ງເຖິງທານທີ່ບຸກຄົນໃຫ້ໃນບ່ອນໃດມີຜົນຫຼາຍ

ຂ້າພຣະອົງຈັກທ່ຽວຈາກບ້ານໄປສູ່ບ້ານ
ຈາກເມືອງໄປສູ່ເມືອງ ນອບນ້ອມພຣະສຳມາສຳພຸດທະເຈົ້າ
ແລະພຣະທຳເຊິ່ງມີສ່ວນນຳພາໃຫ້ເປັນຄົນດີ

**ອາລະວະກະສູດທີ ໑໒ ຈົບ**

**ຍັກຂະສັງຍຸດ ຈົບບໍລິບູນ**

## ລວມພຣະສູດທີ່ ມີໃນສັງຍຸດນີ້ ຄື

໑. ອິນທະກະສູດ
໒. ສັກກະສູດ
໓. ສູຈິໂລມະສູດ
໔. ມະນິພັດທະສູດ
໕. ສານຸສູດ
໖. ປິຍັງກະຣະສູດ
໗. ປຸນັບພະສຸສູດ
໘. ສຸທັດຕະສູດ
໙. ປະຖົມສຸກກາສູດ
໑໐. ທຸຕິຍະສຸກກາສູດ
໑໑. ຈີຣາສູດ
໑໒. ອາລະວະກະສູດ

# ໑໑. ສັກກະສັງຍຸດ

# ໑. ປະຖົມວັກ

### ໝວດທີ ໑

## ໑. ສຸວີຣະສູດ

### ວ່າດ້ວຍສຸວີຣະເທບພະບຸດ

[໘໔໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພວກອະສູນໄດ້ຮົບກັບພວກເທບ ຄັ້ງນັ້ນ ທ້າວສັກກະຈອມເທບຮັບສັ່ງຮຽກສຸວີຣະເທບພະບຸດມາຕັດວ່າ ສຸວີຣະ ພວກອະສູນເຫຼົ່ານີ້ກຳລັງພາກັນມາຮົບກັບພວກເທບ ທ່ານຈົ່ງໄປປ້ອງກັນພວກອະສູນໄວ້ເທີ້ນສຸວີຣະເທບພະບຸດຮັບພຣະບັນຊາຂອງທ້າວສັກກະຈອມເທບແລ້ວກໍເຜີລືມຊ້ຳ

ແມ່ນເທື່ອທີ ໒ ທ້າວສັກກະຈອມເທບກໍຮັບສັ່ງຮຽກສຸວີຣະເທບພະບຸດມາຕັດວ່າ ສຸວີຣະ ພວກອະສູນເຫຼົ່ານັ້ນກຳລັງພາກັນມາຮົບກັບພວກເທບ ທ່ານຈົ່ງໄປປ້ອງກັນພວກອະສູນໄວ້ເທີ້ນ ແມ່ນເທື່ອທີ ໒ ສຸວີຣະເທບພະບຸດຮັບພຣະບັນຊາຂອງທ້າວສັກກະຈອມເທບແລ້ວກໍເຜີລືມຊ້ຳ

ແມ່ນເທື່ອທີ ໓ ທ້າວສັກກະຈອມເທບກໍຮັບສັ່ງຮຽກສຸວີຣະເທບພະບຸດມາຕັດວ່າ ສຸວີຣະ ພວກອະສູນເຫຼົ່ານັ້ນ ກຳລັງພາກັນມາຮົບກັບພວກເທບ ທ່ານຈົ່ງໄປປ້ອງກັນພວກອະສູນໄວ້ເທີ້ນ ແມ່ນເທື່ອທີ ໓ ສຸວີຣະເທບພະບຸດຮັບພຣະບັນຊາຂອງທ້າວສັກກະຈອມເທບແລ້ວກໍເຜີລືມຊ້ຳ

ຄັ້ງນັ້ນ ທ້າວສັກກະຈອມເທບໄດ້ຕັດກັບສຸວີຣະເທບພະບຸດດ້ວຍຄາຖາ ວ່າ

ບຸກຄົນບໍ່ດຸໝັ່ນ ບໍ່ພະຍາຍາມ
ປະສົບຄວາມສຸກໄດ້ໃນບ່ອນໃດ

ສຸວີຣະ ທ່ານຈົ່ງໄປໃນບ່ອນນັ້ນ
ແລະຈົ່ງພາເຮົາໄປໃຫ້ເຖິງບ່ອນນັ້ນດ້ວຍ

ສຸວີຣະເທບພະບຸດຂາບທູນ ວ່າ

ບຸກຄົນຜູ້ຂີ້ຄ້ານ ບໍ່ດູໝັ່ນ
ທັງຍັງບໍ່ຍ້ອມໃຊ້ຄົນອື່ນ ໃຫ້ຊ່ອຍເຮັດກິດທັງຫຼາຍ
ເຂົາພ້ອມພຽງດ້ວຍການທຸກຢ່າງ
ຂ້າແດ່ ທ້າວສັກກະ
ຂໍພຣະອົງຈົ່ງຕັດບອກຖານະອັນປະເສີດນັ້ນ
ແກ່ຂ້າພຣະອົງດ້ວຍເທີ້ນ

ທ້າວສັກກະຕັດຕອບວ່າ

ບຸກຄົນຜູ້ຂີ້ຄ້ານ ບໍ່ດູໝັ່ນ
ປະສົບຄວາມສຸກທີ່ສຸດໄດ້ໃນບ່ອນໃດ
ສຸວີຣະ ທ່ານຈົ່ງໄປໃນບ່ອນນັ້ນ
ແລະຈົ່ງພາເຮົາໄປໃຫ້ເຖິງບ່ອນນັ້ນດ້ວຍ

ສຸວີຣະເທບພະບຸດຂາບທູນ ວ່າ

ຂ້າແດ່ ທ້າວສັກກະ ຜູ້ປະເສີດກວ່າເທບ
ຂ້າພຣະອົງທັງຫຼາຍຈະເພິ່ງໄດ້ຄວາມສຸກໃດ
ໂດຍບໍ່ຕ້ອງທຳການງານ ຂ້າແດ່ທ້າວສັກກະ
ຂໍພຣະອົງຈົ່ງຕັດບອກຄວາມສຸກອັນປະເສີດນັ້ນ
ທີ່ບໍ່ມີຄວາມເສົ້າໂສກ ບໍ່ມີຄວາມຄັບແຄ້ນໃຈ
ແກ່ຂ້າພຣະອົງດ້ວຍເທີ້ນ

ທ້າວສັກກະຕັດ ວ່າ

ຖ້າຄວາມສຸກຈະມີໄດ້ໂດຍບໍ່ຕ້ອງທຳການງານ
ບໍ່ວ່າຢູ່ບ່ອນໃດໆ ໃຜ ໆ ກໍດຳລົງຊີບຢູ່ບໍ່ໄດ້
ຍ້ອນນັ້ນເປັນທາງແຫ່ງນິບພານ
ສຸວີຣະ ທ່ານຈົ່ງໄປໃນບ່ອນນັ້ນ
ແລະຈົ່ງພາເຮົາໄປໃຫ້ເຖິງບ່ອນນັ້ນດ້ວຍເທີ້ນ

ພິກຂຸທັງຫຼາຍ ກໍທ້າວສັກກະຈອມເທບນັ້ນອາໄສຜົນບຸນຂອງພຣະອົງເປັນຢູ່ ສະເຫວີຍ ຣາດຊະສົມບັດອັນມີຄວາມເປັນໃຫຍ່ຍິ່ງດ້ວຍຄວາມເປັນໃຫຍ່ແຫ່ງເທບຊັ້ນຕາວະຕິງສາ ຍັງມາພັນຣະນາຄຸນແຫ່ງຄວາມພຽນຄືຄວາມດຸໝັ່ນໄດ້ ຂໍ້ທີ່ພວກທ່ານບວດໃນທຳວິໄນທີ່ເຮົາກ່າວໄວ້ດີແລ້ວແນວນີ້ ຂະຫຍັນໝັ່ນພຽນ ພະຍາຍາມເພື່ອບັນລຸມັກຜົນທີ່ຍັງບໍ່ບັນລຸ ເພື່ອໄດ້ມັກຜົນທີ່ຍັງບໍ່ໄດ້ ເພື່ອເຮັດໃຫ້ແຈ້ງມັກຜົນທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຈະເພິ່ງງົດງາມໃນທຳວິໄນນີ້ແທ້ ໆ

**ສຸວີຣະສູດທີ ໑ ຈົບ**

# ໔. ສຸສີມະສູດ

## ວ່າດ້ວຍສຸສີມະເທບພະບຸດ

[໔໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພວກອະສູນໄດ້ຮົບກັບພວກເທບ ຄັ້ງນັ້ນ ທ້າວສັກກະຈອມເທບຮັບສັ່ງຮຽກສຸສີມະເທບພະບຸດມາຕັດວ່າ ສຸສີມະ ພວກອະສູນເຫຼົ່ານີ້ກຳລັງພາກັນມາຮົບກັບພວກເທບ ທ່ານຈົ່ງໄປປ້ອງກັນພວກອະສູນໄວ້ເທີ້ນສຸສີມະເທບພະບຸດຮັບພຣະບັນຊາຂອງທ້າວສັກກະຈອມເທບແລ້ວກໍເຜີລືມຊໍ້າ

ແມ່ນເທື່ອທີ ໔ ທ້າວສັກກະຈອມເພບຮັບສັ່ງຮຽກ ສຸສີມະເທບພະບຸດມາຕັດ ໗ລ໗ ແລ້ວກໍເຜີລືມຊໍ້າອີກ

ແມ່ນເທື່ອທີ ໓ ທ້າວສັກກະຈອມເພບຮັບສັ່ງຮຽກ ສຸສີມະເທບພະບຸດມາຕັດວ່າ ສຸຊີມະ ພວກອະສູນເຫຼົ່ານີ້ ກຳລັງພາກັນມາຮົບກັບພວກເທບ ທ່ານຈົ່ງໄປປ້ອງກັນພວກອະສູນໄວ້ເທີ້ນ

ແມ່ນເທື່ອທີ ໓ ສຸສີມະເທບພະບຸດຮັບພຣະບັນຊາຂອງທ້າວ ສັກກະຈອມເທບແລ້ວກໍເຜີລືມຊໍ້າອີກ

ລຳດັບນັ້ນ ທ້າວສັກກະຈອມເທບໄດ້ຕັດກັບສຸສີມະເທບພະບຸດດ້ວຍຄາຖາ ວ່າ

ບຸກຄົນບໍ່ດຸໝັ່ນ ບໍ່ພະຍາຍາມ
ແຕ່ປະສົບຄວາມສຸກໄດ້ໃນບ່ອນໃດ

ສຸສີມະ ທ່ານຈົ່ງໄປໃນບ່ອນນັ້ນ
ແລະຈົ່ງພາເຮົາໄປໃຫ້ເຖິງບ່ອນນັ້ນດ້ວຍ

ສຸສີມະເທບພະບຸດຂາບທູນ ວ່າ

ບຸກຄົນຜູ້ຂີ້ຄ້ານ ບໍ່ດຸໝັ່ນ
ທັງຍັງບໍ່ໃຊ້ຜູ້ໃດ ໃຫ້ຊ່ອຍເຮັດກິດທັງຫຼາຍອີກດ້ວຍ
ເຂົາພ້ອມພຽງດ້ວຍການທຸກຢ່າງ
ຂ້າແດ່ທ້າວສັກກະ
ຂໍພຣະອົງຈົ່ງຕັດບອກຖານະອັນປະເສີດນັ້ນ
ແກ່ຂ້າພຣະອົງດ້ວຍເທີ້ນ

ທ້າວສັກກະຕັດ ວ່າ

ບຸກຄົນຜູ້ຂີ້ຄ້ານ ບໍ່ດຸໝັ່ນ
ປະສົບຄວາມສຸກທີ່ສຸດໄດ້ໃນບ່ອນໃດ
ສຸສີມະ ທ່ານຈົ່ງໄປໃນບ່ອນນັ້ນ
ແລະຈົ່ງພາເຮົາໄປໃຫ້ເຖິງທີ່ນັ້ນດ້ວຍ

ສຸສີມະເທບພະບຸດຂາບທູນ ວ່າ

ຂ້າແດ່ທ້າວສັກກະ ຜູ້ປະເສີດກວ່າເທບ

ຂ້າພຣະອົງທັງຫຼາຍຈະເພິ່ງໄດ້ຄວາມສຸກໃດ

ໂດຍບໍ່ຕ້ອງທຳການງານເລີຍ
ຂ້າແດ່ທ້າວສັກກະ
ຂໍພຣະອົງຈົ່ງຕັດບອກຄວາມສຸກອັນປະເສີດນັ້ນ
ທີ່ບໍ່ມີຄວາມເສົ້າໂສກ ບໍ່ມີຄວາມຄັບແຄ້ນໃຈ
ແກ່ຂ້າພຣະອົງດ້ວຍເທີ້ນ

ທ້າວສັກກະຕັດ ວ່າ

ຖ້າຄວາມສຸກຈະມີໄດ້ໂດຍບໍ່ຕ້ອງທຳການງານ
ບໍ່ວ່າຢູ່ບ່ອນໃດ ໃຜ ໆ ກໍດຳລົງຊີບຢູ່ບໍ່ໄດ້
ຍ້ອນນັ້ນເປັນທາງແຫ່ງນິບພານ

ສຸຊິມະ ທ່ານຈົ່ງໄປໃນບ່ອນນັ້ນ
ແລະຈົ່ງພາເຮົາໄປໃຫ້ເຖິງບ່ອນນັ້ນດ້ວຍເທີ້ນ

ພິກຂຸທັງຫຼາຍ ກໍທ້າວສັກກະຈອມເທບນັ້ນອາໄສຜົນບຸນຂອງພຣະອົງເປັນຢູ່ ສະເຫວີຍຣາດຊະສົມບັດອັນມີຄວາມເປັນໃຫຍ່ຍິ່ງ ດ້ວຍຄວາມເປັນໃຫຍ່ແຫ່ງເທບຊັ້ນຕາວະຕິງສາ ຍັງມາພັນນາຄຸນແຫ່ງຄວາມພຽນຄືຄວາມດຸໝັ່ນ ຂໍ້ທີ່ພວກທ່ານບວດໃນທຳວິໄນທີ່ເຮົາກ່າວໄວ້ດີແລ້ວແນວນີ້ ຂະຫຍັນໝັ່ນພຽນ ພະຍາຍາມເພື່ອບັນລຸມັກຜົນທີ່ຍັງບໍ່ບັນລຸ ເພື່ອໄດ້ມັກຜົນທີ່ຍັງບໍ່ໄດ້ເພື່ອເຮັດໃຫ້ແຈ້ງມັກຜົນທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຈະເພິ່ງງົດງາມໃນທຳວິໄນນີ້ຢ່າງແທ້ຈິງ

**ສຸສິມະສູດທີ ໘ ຈົບ**

# ໓. ທະຊັກຄະສູດ

## ວ່າດ້ວຍເລື້ອງຍອດທຸງ

[໘໔໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈິ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທບກັບອະສູນປະຊິດຕິດກັນ ຄັ້ງນັ້ນ ທ້າວສັກກະຈອມເທບຮັບສັ່ງກັບເທບຊັ້ນຕາວະຕິງສາ ວ່າ

ທ່ານຜູ້ນິຣະທຸກທັງຫຼາຍ ຖ້າຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນ ຫົວລຸກ ຈະເພິ່ງເກີດຂຶ້ນແກ່ພວກເທບຜູ້ໄປໃນສົງຄາມ ສະໄໝນັ້ນ ພວກທ່ານເພິ່ງແນມເບິ່ງຍອດທຸງຂອງເຮົາ ຍ້ອນວ່າ ເມື່ອພວກທ່ານແນມເບິ່ງຍອດທຸງຂອງເຮົາຢູ່ ຄວາມຢ້ານ ຄວາມສັ່ນເຊັນຫຼືຄວາມຂົນຫົວລຸກທີ່ຈັກເກີດຂຶ້ນແກ່ພວກທ່ານກໍຈັກຫາຍໄປ

ຖ້າພວກທ່ານບໍ່ແນມເບິ່ງຍອດທຸງຂອງເຮົາ ໃນເວລານັ້ນຂໍໃຫ້ພວກທ່ານເພິ່ງແນມເບິ່ງຍອດທຸງຂອງທ້າວປະຊາບໍດີເທວະຣາດເທີ້ນ ຍ້ອນວ່າ ເມື່ອພວກທ່ານແນມເບິ່ງຍອດທຸງຂອງທ້າວປະຊາບໍດີເທວະຣາດຢູ່ ຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນຫົວລຸກທີ່ຈັກເກີດຂຶ້ນກໍຈັກຫາຍໄປ

ຖ້າພວກທ່ານບໍ່ແນມເບິ່ງຍອດທຸງຂອງທ້າວປະຊາບໍດີເທວະຣາດ ໃນເວລານັ້ນພວກທ່ານກໍເພິ່ງແນມເບິ່ງຍອດທຸງຂອງທ້າວວະຣຸນເທວະຣາດເທີ້ນ ຍ້ອນວ່າ ເມື່ອພວກທ່ານແນມເບິ່ງຍອດທຸງຂອງທ້າວວະຣຸນເທວະຣາຊະຢູ່ ຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນຫົວລຸກທີ່ຈັກເກີດຂຶ້ນກໍຈັກຫາຍໄປ

ຖ້າພວກທ່ານບໍ່ແນມເບິ່ງຍອດທຸງຂອງທ້າວວະຣຸນເທວະຣາດ ໃນທີ່ນັ້ນພວກທ່ານເພິ່ງແນມເບິ່ງ ຍອດທຸງຂອງທ້າວອີສານເທວະຣາດເທີ້ນ ຍ້ອນວ່າ ເມື່ອພວກທ່ານແນມເບິ່ງຍອດທຸງຂອງທ້າວອີສານເທວະຣາດຢູ່ ຄວາມຢ້ານ ຄວາມຕື່ນຕົກໃຈ ຫຼືຄວາມຂົນຫົວລຸກ ທີ່ຈັກເກີດຂຶ້ນກໍຈັກຫາຍໄປ

ເມື່ອພວກເທບແນມເບິ່ງຍອດທຸງຂອງທ້າວສັກກະຈອມເທບກໍດີ ແນມເບິ່ງຍອດທຸງຂອງທ້າວປະຊາບໍດີເທວະຣາຊະກໍດີ ແນມເບິ່ງຍອດທຸງຂອງທ້າວວະຣຸນເທວະຣາດກໍດີ ແນມເບິ່ງຍອດທຸງຂອງທ້າວອີສານເທວະຣາດກໍດີ ຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນຫົວລຸກທີ່ຈັກເກີດຂຶ້ນ ເພິ່ງຫາຍໄປແດ່ ບໍ່ຫາຍໄປແດ່ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນວ່າ ທ້າວສັກກະຈອມເທບຍັງບໍ່ປາສະຈາກຣາຄະ ບໍ່ປາສະຈາກໂທສະ ບໍ່ປາສະຈາກໂມຫະ ເປັນຜູ້ມີຄວາມຢ້ານ ມີຄວາມຕື່ນຕົກໃຈ ອາດຈະໜີໄປກໍໄດ້

ພິກຂຸທັງຫຼາຍ ສ່ວນເຮົາກ່າວແນວນີ້ວ່າ ພິກຂຸທັງຫຼາຍ ຫາກວ່າຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນຫົວລຸກ ເພິ່ງບັງເກີດແກ່ພວກທ່ານຜູ້ຢູ່ໃນປ່າ ຢູ່ທີ່ເຫງົ້າໄມ້ ຫຼື ຢູ່ໃນເຮືອນວ່າງ ເວລານັ້ນ ພວກທ່ານເພິ່ງຣະນຶກເຖິງເຮົາຢູ່ເລື້ອຍ ໆ ທີ່ນັ້ນ ວ່າ

ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍ ພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ[໑] ພິກຂຸທັງຫຼາຍ ຍ້ອນວ່າ ເມື່ອພວກທ່ານຣະນຶກເຖິງເຮົາຢູ່ເລື້ອຍ ໆ ຢູ່ ຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນຫົວລຸກທີ່ຈັກເກີດຂຶ້ນກໍຈັກຫາຍໄປ

ຖ້າພວກທ່ານບໍ່ຣະນຶກເຖິງເຮົາຢູ່ເລື້ອຍ ໆ ເວລານັ້ນ ພວກທ່ານເພິ່ງຣະນຶກເຖິງພຣະທຳຢູ່ເລື້ອຍ ໆ ວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງໄດ້ດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ພິກຂຸທັງຫຼາຍ ຍ້ອນວ່າ ເມື່ອພວກທ່ານຣະນຶກເຖິງພຣະທຳຢູ່ເລື້ອຍ ໆ ຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນຫົວລຸກທີ່ຈັກເກີດຂຶ້ນກໍຈັກຫາຍໄປ

ຖ້າພວກທ່ານບໍ່ຣະນຶກເຖິງພຣະທຳຢູ່ເລື້ອຍ ໆ ໃນເວລານັ້ນ ພວກທ່ານເພິ່ງຣະນຶກເຖິງພຣະສົງຢູ່ເລື້ອຍ ໆ ວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງ ພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ຍ້ອນວ່າ ເມື່ອພວກທ່ານຣະນຶກເຖິງພຣະສົງຢູ່ເລື້ອຍ ໆ ຄວາມຢ້ານ ຄວາມຕື່ນຕົກໃຈ ຫຼື ຄວາມຂົນຫົວລຸກທີ່ຈັກເກີດຂຶ້ນກໍຈັກຫາຍໄປ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ເປັນຜູ້ປາສະຈາກຣາຄະ ປາສະຈາກ ໂທສະ ປາສະຈາກໂມຫະ ເປັນຜູ້ບໍ່ມີຄວາມຢ້ານ ບໍ່ເຫຍືອງ ບໍ່ຕື່ນຕົກໃຈ ບໍ່ໜີໄປ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາ ເມື່ອໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍຢູ່ໃນປ່າກໍດີ
ຢູ່ທີ່ເຫງົ້າໄມ້ກໍດີ ຢູ່ໃນເຮືອນວ່າງກໍດີ
ເພິ່ງຣະນຶກເຖິງພຣະສຳມາສຳພຸດທະເຈົ້າຢູ່ເທີ້ນ
ຄວາມຢ້ານບໍ່ເພິ່ງມີແກ່ທ່ານທັງຫຼາຍ

ຖ້າທ່ານທັງຫຼາຍບໍ່ຣະນຶກເຖິງພຣະພຸດທະເຈົ້າ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ
ໃນເວລານັ້ນ ທ່ານທັງຫຼາຍເພິ່ງຣະນຶກເຖິງພຣະທຳ
ເຊິ່ງເປັນເຫດນຳອອກຈາກທຸກ
ທີ່ພຣະພຸດທະເຈົ້າຊົງສະແດງໄວ້ດີແລ້ວ

ຖ້າທ່ານທັງຫຼາຍບໍ່ຣະນຶກເຖິງພຣະທຳ
ເຊິ່ງເປັນເຫດນຳອອກຈາກທຸກ
ທີ່ພຣະພຸດທະເຈົ້າຊົງສະແດງໄວ້ດີແລ້ວ
ໃນເວລານັ້ນ ທ່ານທັງຫຼາຍເພິ່ງຣະນຶກເຖິງພຣະສົງ
ຜູ້ເປັນນາບຸນ ບໍ່ມີນາບຸນອື່ນຍິ່ງກວ່າ

ພິກຂຸທັງຫຼາຍ ເມື່ອທ່ານທັງຫຼາຍຣະນຶກເຖິງ
ພຣະພຸດທະເຈົ້າ ພຣະທຳ ແລະພຣະສົງຢູ່
ຄວາມຢ້ານກໍດີ ຄວາມຕື່ນຕົກໃຈກໍດີ
ຄວາມຂົນຫົວລຸກກໍດີ ຈັກບໍ່ມີເລີຍ

**ທະຊັກຄະສູດທີ ၃ ຈົບ**

# ໔. ເວປະຈິດຕິສູດ

## ວ່າດ້ວຍທ້າວເວປະຈິດຕິ

[໔໕໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໆລໆ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທບກັບອະສູນປະຊິດກັນ ຄັ້ງນັ້ນທ້າວເວປະຈິດຕິຈອມອະສູນຮັບສັ່ງກັບພວກອະສູນວ່າ ທ່ານຜູ້ນິຣະທຸກທັງຫຼາຍ ຖ້າເມື່ອສົງຄາມລະຫວ່າງເທບກັບອະສູນປະຊິດກັນ ພວກອະສູນເພິ່ງຊະນະ ພວກເທບເພິ່ງປຣາໄຊ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຄຸມຂັງທ້າວສັກກະຈອມເທບດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍໄວ້ ແລ້ວເພິ່ງນຳມາຍັງເມືອງອະສູນໃນສຳນັກຂອງເຮົາ

ຝ່າຍທ້າວສັກກະຈອມເທບຮັບສັ່ງກັບເທບຊັ້ນຕາວະຕຶງສາທັງຫຼາຍວ່າ ທ່ານຜູ້ນິຣະທຸກທັງຫຼາຍ ຖ້າເມື່ອສົງຄາມລະຫວ່າງເທບກັບອະສູນຕິປະຊິດຕິດກັນຢູ່ ພວກເທບເພິ່ງຊະນະພວກອະສູນເພິ່ງປຣາໄຊ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຄຸມຂັງທ້າວເວປະຈິດຕິຈອມອະສູນດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ ແລ້ວເພິ່ງນຳມາຍັງສະພາຊື່ສຸທຳມາ ໃນສຳນັກຂອງເຮົາ

ສົງຄາມຄັ້ງນັ້ນ ພວກເທບຊະນະ ພວກອະສູນປຣາໄຊ ຕໍ່ມາເທບຊັ້ນຕາວະຕຶງສາໄດ້ຄຸມຂັງທ້າວເວປະຈິດຕິຈອມອະສູນດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ ແລ້ວນຳມາຍັງສະພາຊື່ ສຸທຳມາ ໃນສຳນັກຂອງທ້າວສັກກະຈອມເທບ ໄດ້ຂ່າວວ່າ ທ້າວເວປະຈິດຕິຈອມອະສູນຖືກຄຸມຂັງດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ ໄດ້ດ່າຕຳໜິທ້າວສັກກະຈອມເທບ ເຊິ່ງກຳລັງສະເດັດເຂົ້າ ແລະ ອອກຍັງສະພາຊື່ສຸທຳມາ ດ້ວຍວາຈາຫຍາບຄາຍອັນບໍ່ແມ່ນວາຈາຂອງສັດຕະບຸຣຸດ

ພິກຂຸທັງຫຼາຍ ຄັ້ງນັ້ນ ມາຕະລີເທບພະບຸດຜູ້ສົງເຄາະ ໄດ້ທູນຖາມທ້າວສັກກະຈອມເທບດ້ວຍຄາຖາ ວ່າ

ຂ້າແດ່ ທ້າວສັກກະມະຄະວານ
ພຣະອົງໄດ້ຊົງສະດັບຄຳເວົ້າອັນຫຍາບຄາຍ
ຕໍ່ໜ້າຂອງທ້າວເວປະຈິດຕິຈອມອະສູນ
ຍັງຊົງອົດທົນໄດ້ຍ້ອນຄວາມຢ້ານ
ຫຼື ຍ້ອນບໍ່ມີກຳລັງ ຂ້ານ້ອຍ

ທ້າວສັກກະຕັດຕອບ ວ່າ

ເຮົາອົດທົນຄຳເວົ້າອັນຫຍາບຄາຍ
ຂອງທ້າວເວປະຈິດຕິໄດ້ຍ້ອນຄວາມຢ້ານ
ຫຼື ຍ້ອນບໍ່ມີກຳລັງກໍບໍ່ແມ່ນ
ວິນຍູຊົນຄືເຮົາຈະໂຕ້ຕອບກັບຄົນພານເຮັດຫຍັງ

ມາຕະລິເທບພະບຸດຂາບທູນ ວ່າ

ພວກຄົນພານເພິ່ງທຳລາຍໄດ້ທຸກສິ່ງທຸກຢ່າງ
ຖ້າເຮົາບໍ່ກີດກັນໄວ້ກ່ອນ
ທີຣະຊົນເພິ່ງກີດກັນພວກຄົນພານໄວ້
ດ້ວຍອາດຍາຢ່າງຮ້າຍແຮງ

ທ້າວສັກກະຕັດ ວ່າ

ຜູ້ໃດຮູ້ວ່າຄົນອື່ນໂກດ ເປັນຜູ້ມີສະຕິ ສະງົບໃຈໄວ້ໄດ້
ເຮົາເຫັນວ່າ ການສະງົບໃຈໄວ້ໄດ້ຂອງຜູ້ນັ້ນ
ເປັນການກີດກັນພວກຄົນພານໄວ້ໄດ້

ມາຕະລິເທບພະບຸດຂາບທູນ ວ່າ

ຂ້າແດ່ ທ້າວວາສະວະ ຂ້າພຣະອົງເຫັນຄຸນ
ແລະໂທດໃນຄວາມອົດກັ້ນນີ້ວ່າ
ເມື່ອໃດ ຄົນພານຍ່ອມເຂົ້າໃຈບຸກຄົນນັ້ນວ່າ
ຜູ້ນີ້ອົດກັ້ນຕໍ່ເຮົາຍ້ອນຄວາມຢ້ານ
ເມື່ອນັ້ນ ຄົນມີປັນຍາຊາມກໍຍິ່ງຂົ່ມຂີ່ຜູ້ນັ້ນ
ຄືງົວໂຕທີ່ມີກຳລັງຂົ່ມຂີ່ງົວໂຕທີ່ປຣາໄຊໃຫ້ໜີໄປ ສັນນັ້ນ

ທ້າວສັກກະຕັດ ວ່າ

ບຸກຄົນ ຈະເຂົ້າໃຈວ່າ ຄົນນີ້ອົດກັ້ນຕໍ່ເຮົາໄດ້
ຍ້ອນຄວາມຢ້ານ ຫຼື ບໍ່ກໍຕາມ
ປະໂຫຍດທັງຫຼາຍຂອງຕົນເປັນຢ່າງຍິ່ງ
ປະໂຫຍດອື່ນທີ່ຍິ່ງກວ່າຂັນຕິບໍ່ມີ
ບຸກຄົນໃດເປັນຄົນແຂງແຮງ
ອົດກັ້ນຕໍ່ຜູ້ອ່ອນແຮງກວ່າໄດ້
ຄວາມອົດກັ້ນຂອງບຸກຄົນນັ້ນ
ບັນດິດທັງຫຼາຍກ່າວວ່າເປັນຂັນຕິຢ່າງຍິ່ງ
ຍ້ອນວ່າບຸກຄົນຜູ້ອ່ອນແຮງຈະຕ້ອງອົດທົນຢູ່ເອງ
ກຳລັງຂອງບຸກຄົນໃດບໍ່ເຂັ້ມແຂງ
ບັນດິດທັງຫຼາຍກ່າວເຖິງກຳລັງຂອງບຸກຄົນນັ້ນວ່າ ບໍ່ແມ່ນກຳລັງ
ຍ້ອນວ່າບໍ່ມີບຸກຄົນໃດກ່າວໂຕ້ຕອບບຸກຄົນຜູ້ມີກຳລັງ
ແລະມີທຳຄຸ້ມຄອງແລ້ວ
ຜູ້ໃດໂກດຕອບຕໍ່ບຸກຄົນຜູ້ໂກດ
ຜູ້ນັ້ນຍ່ອມຊົ່ວກວ່າຜູ້ໂກດ ຍ້ອນການໂກດຕອບນັ້ນ
ບຸກຄົນຜູ້ບໍ່ໂກດຕອບຕໍ່ບຸກຄົນຜູ້ໂກດ
ຊື່ວ່າຊະນະສົງຄາມທີ່ຊະນະໄດ້ຍາກ
ຜູ້ໃດຮູ້ວ່າຜູ້ອື່ນໂກດ ເປັນຜູ້ມີສະຕິ ສະງົບໃຈໄວ້ໄດ້
ຜູ້ນັ້ນຊື່ວ່າ ປະພຶດປະໂຫຍດຂອງຄົນທັງ ໒ ຝ່າຍ
ຄືຝ່າຍຕົນແລະຝ່າຍຜູ້ນັ້ນ
ເມື່ອຜູ້ນັ້ນ ຖືຮັກສາປະໂຫຍດຂອງຄົນທັງ ໒ ຝ່າຍ
ຄືຝ່າຍຕົນແລະຝ່າຍຜູ້ອື່ນ
ຊົນທັງຫຼາຍຜູ້ບໍ່ສະຫຼາດໃນທຳຍ່ອມເຂົ້າໃຈວ່າເປັນຄົນໂງ່

ພິກຂຸທັງຫຼາຍ ກໍທ້າວສັກກະຈອມເທບນັ້ນ ອາໄສຜົນບຸນຂອງພຣະອົງເປັນຢູ່ ສະເຫວີຍຣາດຊະສົມບັດອັນມີຄວາມເປັນໃຫຍ່ຍິ່ງ ດ້ວຍຄວາມເປັນໃຫຍ່ແຫ່ງເທບຊັ້ນຕາວະຕິງສາ ຍັງມາພັນຣະນາຄຸນຂອງຂັນຕິ ແລະ ໂສຣັດຈະໄວ້ ກໍຂໍ້ທີ່ພວກທ່ານບວດໃນທຳວິໄນທີ່ເຮົາກ່າວໄວ້ດີແລ້ວ ເປັນຜູ້ອົດທົນແລະສະງົບສະງ່ຽມໄດ້ ນີ້ຈະເພິ່ງງົດງາມໃນທຳວິໄນນີ້ຢ່າງແທ້ຈິງ

**ເວປະຈິດຕິສູດທີ ໔ ຈົບ**

# ໕. ສຸພາສິຕະຊະຍະສູດ

## ວ່າດ້ວຍການແຂ່ງຂັນຄຳສຸພາສິດ

[໘໕໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທບກັບອະສູນປະຊິດກັນ ຄັ້ງນັ້ນທ້າວເວປະຈິດຕິຈອມອະສູນໄດ້ກ່າວກັບທ້າວສັກກະຈອມເທບດັ່ງນີ້ວ່າ ທ່ານຈອມເທບ ເຮົາຈົ່ງມາຊະນະກັນດ້ວຍການກ່າວຄຳສຸພາສິດເທີ້ນ ທ້າວສັກກະຈອມເທບຕັດວ່າ ທ່ານທ້າວເວປະຈິດຕິ ຕົກລົງຕາມນັ້ນ ພວກເຮົາມາເອົາຊະນະກັນດ້ວຍການກ່າວຄຳສຸພາສິດຄັ້ງນັ້ນ ພວກເທບແລະພວກອະສູນໄດ້ຮ່ວມກັນຕັ້ງຜູ້ຕັດສິນໂດຍມີກະຕິກາວ່າ ຜູ້ຕັດສິນເຫຼົ່ານີ້ຈະຕ້ອງຮູ້ທົ່ວເຖິງຄຳສຸພາສິດ ແລະ ຄຳທຸບພາສິດ

ລຳດັບນັ້ນ ທ້າວເວປະຈິດຕິຈອມອະສູນໄດ້ກ່າວກັບທ້າວສັກກະຈອມເທບດັ່ງນີ້ວ່າ ທ່ານຈອມເທບ ທ່ານຈົ່ງຕັດຄາຖາຂຶ້ນກ່ອນເມື່ອທ້າວເວປະຈິດຕິກ່າວແນວນີ້ ທ້າວສັກກະ ຈອມເທບໄດ້ຕັດກັບທ້າວເວປະຈິດຕິຈອມອະສູນວ່າ ທ່ານທ້າວເວປະຈິດຕິ ທ່ານເປັນເທບໃນເທວະໂລກນີ້ມາກ່ອນ ສັນນັ້ນ ຂໍໃຫ້ທ່ານຈົ່ງກ່າວຄາຖາກ່ອນ ເມື່ອທ້າວສັກກະຕັດແນວນີ້ແລ້ວ ທ້າວເວປະຈິດຕິຈອມອະສູນໄດ້ກ່າວຄາຖານີ້ ວ່າ

ພວກຄົນພານເພິ່ງທຳລາຍໄດ້ທຸກສິ່ງທຸກຢ່າງ
ຖ້າເຮົາບໍ່ກົດກັນໄວ້ກ່ອນ
ທີຣະຊົນເພິ່ງກົດກັນພວກຄົນພານໄວ້
ດ້ວຍອາດຍາຢ່າງຮ້າຍແຮງ

ເມື່ອທ້າວເວປະຈິດຕິຈອມອະສູນໄດ້ກ່າວຄາຖານີ້ແລ້ວ ພວກອະສູນພາກັນອະນຸໂມທະນາ ພວກເທບຕ່າງກໍພາກັນມິດຢູ່ ລຳດັບນັ້ນ ທ້າວເວປະຈິດຕິຈອມອະສູນໄດ້ກ່າວກັບທ້າວສັກກະຈອມເທບວ່າ ທ່ານຈອມເທບ ທ່ານຈົ່ງກ່າວຄາຖາເທີ້ນ ເມື່ອທ້າວເວປະຈິດຕິກ່າວແນວນີ້ແລ້ວ ທ້າວສັກກະຈອມເທບໄດ້ກ່າວຄາຖານີ້ ວ່າ

ຜູ້ໃດຮູ້ວ່າຜູ້ອື່ນໂກດ ເປັນຜູ້ມີສະຕິ ສະງົບໃຈໄວ້ໄດ້
ເຮົາເຫັນວ່າ ການສະງົບໃຈໄວ້ໄດ້ຂອງຜູ້ນັ້ນ
ເປັນການກົດກັນພວກຄົນພານໄວ້ໄດ້

ເມື່ອທ້າວສັກກະຈອມເທບໄດ້ກ່າວຄາຖານີ້ແລ້ວ ພວກເທບກໍພາກັນອະນຸໂມທະນາ ພວກອະສູນກໍພາກັນມິດຢູ່ ລຳດັບນັ້ນ ທ້າວສັກກະຈອມເທບໄດ້ຕັດກັບທ້າວເວປະຈິດຕິຈອມອະສູນດັ່ງນີ້ວ່າ ທ້າວເວປະຈິດຕິ ທ່ານຈົ່ງກ່າວຄາຖາຕໍ່ໄປເທີ້ນ ເມື່ອທ້າວສັກກະຕັດແນວນີ້ ທ້າວເວປະຈິດຕິຈອມອະສູນໄດ້ກ່າວຄາຖານີ້ ວ່າ

ທ່ານທ້າວວາສະວະ ຂ້າພະເຈົ້າເຫັນຄຸນ
ແລະໂທດໃນຄວາມອົດກັ້ນນີ້ວ່າ
ເມື່ອໃດ ຄົນພານເຂົ້າໃຈບຸກຄົນນັ້ນ ວ່າ
ຜູ້ນີ້ຍ່ອມອົດກັ້ນຕໍ່ເຮົາຍ້ອນຄວາມຢ້ານ
ເມື່ອນັ້ນ ຄົນມີປັນຍາຊາມກໍຍິ່ງຂົ່ມຂີ່ຜູ້ນັ້ນ
ຄືງົວໂຕທີ່ມີກຳລັງຂົ່ມຂີ່ງົວໂຕທີ່ປຣາໄຊໃຫ້ໜີໄປ ສັນນັ້ນ

ເມື່ອທ້າວເວປະຈິດຕິຈອມອະສູນກ່າວຄາຖານີ້ແລ້ວ ພວກອະສູນພາກັນອະນຸໂມທະນາ ພວກເທບຕ່າງກໍມິດຢູ່ ລຳດັບນັ້ນ ທ້າວເວປະຈິດຕິຈອມອະສູນໄດ້ກ່າວກັບທ້າວສັກກະຈອມເທບດັ່ງນີ້ວ່າ ທ່ານຈອມເທບ ທ່ານຈົ່ງກ່າວຄາຖາຕໍ່ໄປເທີ້ນ ເມື່ອທ້າວເວປະຈິດຕິຈອມອະສູນກ່າວແນວນີ້ ທ້າວສັກກະຈອມເທບໄດ້ຕັດຄາຖາເຫຼົ່ານີ້ ວ່າ

ບຸກຄົນຈະເຂົ້າໃຈວ່າຜູ້ນີ້ອົດກັ້ນຕໍ່ເຮົາໄດ້
ຍ້ອນຄວາມຢ້ານຫຼືບໍ່ກໍຕາມ
ປະໂຫຍດທັງຫຼາຍຂອງຕົນເປັນຢ່າງຍິ່ງ
ປະໂຫຍດທີ່ຍິ່ງກວ່າຂັນຕິບໍ່ມີ

ບຸກຄົນໃດເປັນຄົນແຂງແຮງ
ອົດກັ້ນຕໍ່ຜູ້ອ່ອນແຮງກວ່າໄດ້
ຄວາມອົດກັ້ນຂອງບຸກຄົນນັ້ນ
ບັນດິດທັງຫຼາຍກ່າວວ່າເປັນຂັນຕິຢ່າງຍິ່ງ

ຍ້ອນວ່າ ບຸກຄົນຜູ້ແຂງແຮງຈະຕ້ອງອົດທົນຢູ່ເອງ
ກຳລັງຂອງບຸກຄົນໃດບໍ່ເຂັ້ມແຂງ
ບັນດິດທັງຫຼາຍກ່າວເຖິງກຳລັງຂອງບຸກຄົນນັ້ນວ່າ ບໍ່ແມ່ນກຳລັງ
ຍ້ອນວ່າບໍ່ມີບຸກຄົນໃດກ່າວໂຕ້ຕອບບຸກຄົນຜູ້ມີກຳລັງ
ແລະມີທຳຄຸ້ມຄອງແລ້ວ

ຜູ້ໃດໂກດຕອບຕໍ່ບຸກຄົນຜູ້ໂກດ

ຜູ້ນັ້ນຍ່ອມຊື່ວ່າຜູ້ໂກດ ຍ້ອນການໂກດຕອບນັ້ນ
ບຸກຄົນຜູ້ບໍ່ໂກດຕອບຕໍ່ບຸກຄົນຜູ້ໂກດ
ຊື່ວ່າຊະນະສົງຄາມທີ່ຊະນະໄດ້ຍາກ

ຜູ້ໃດ ຮູ້ວ່າຜູ້ອື່ນໂກດ ເປັນຜູ້ມີສະຕິ ສະຫງົບໃຈໄວ້ໄດ້
ຜູ້ນັ້ນ ຊື່ວ່າປະພຶດປະໂຫຍດຂອງຄົນທັງ ໒ ຝ່າຍ
ຄືຝ່າຍຕົນແລະຝ່າຍຜູ້ນັ້ນ

ເມື່ອຜູ້ນັ້ນ ຖືຮັກສາປະໂຫຍດຂອງຄົນທັງ ໒ ຝ່າຍ
ຄືຝ່າຍຕົນແລະຝ່າຍຜູ້ອື່ນ
ຊົນທັງຫຼາຍຜູ້ບໍ່ສະຫຼາດໃນທຳຍ່ອມເຂົ້າໃຈວ່າເປັນຄົນໂງ່

ພິກຂຸທັງຫຼາຍ ເມື່ອທ້າວສັກກະຈອມເທບໄດ້ຕັດຄາຖາເຫຼົ່ານີ້ແລ້ວ ພວກເທບພາກັນອະນຸໂມທະນາ ພວກອະສູນຕ່າງກໍມິດຢູ່ ຄັ້ງນັ້ນ ຜູ້ຕັດສິນທັງຂອງພວກເທບ ແລະ ພວກອະສູນໄດ້ກ່າວດັ່ງນີ້ວ່າ ທ້າວເວປະຈິດຕິຈອມອະສູນຕັດຄາຖາທັງຫຼາຍແລ້ວ ແຕ່ຄາຖາເຫຼົ່ານັ້ນມີຄວາມກ່ຽວຂ້ອງກັບອາດຍາ ມີຄວາມກ່ຽວຂ້ອງກັບອາວຸດ ຍ້ອນເຫດນັ້ນ ຈຶ່ງຍັງມີຄວາມຜິດກັນ ຄວາມບາດແຍ່ງກັນ ຄວາມຖຽງກັນ ສ່ວນທ້າວສັກກະຈອມເທບຕັດຄາຖາທັງຫຼາຍແລ້ວ ຄາຖາເຫຼົ່ານັ້ນກໍບໍ່ກ່ຽວຂ້ອງກັບອາດຍາ ບໍ່ກ່ຽວຂ້ອງກັບອາວຸດ ຍ້ອນເຫດນັ້ນ ຈຶ່ງບໍ່ມີຄວາມຜິດກັນ ບໍ່ມີຄວາມບາດແຍ່ງກັນ ບໍ່ມີຄວາມຖຽງກັນ ທ້າວສັກກະຈອມເທບຊະນະຍ້ອນໄດ້ກ່າວຄຳສຸພາສິດໄຊຊະນະດ້ວຍການກ່າວຄຳສຸພາສິດ ໄດ້ເປັນຂອງທ້າວສັກກະຈອມເທບ ດ້ວຍປະການດັ່ງນີ້

**ສຸພາສິຕະຊະຍະສູດທີ ໕ ຈົບ**

## ໖. ກຸລາວະກະສູດ

## ວ່າດ້ວຍຮັງນົກ

[໒໕໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທບກັບອະສູນຕັ້ງປະຊິດຕິດກັນຢູ່ສົງຄາມຄັ້ງນັ້ນ ພວກອະສູນເປັນຝ່າຍຊະນະ ພວກເທບເປັນຝ່າຍປຣາໄຊ ພວກເທບຜູ້ປຣາໄຊຕ່າງພາກັນໜີໄປທາງທິດເໜືອ ພວກອະສູນໄດ້ຊວນກັນໄລ່ຕິດຕາມພວກເທບເຫຼົ່ານັ້ນໄປທັນທີຄັ້ງນັ້ນ ທ້າວສັກກະຈອມເທບໄດ້ຕັດກັບມາຕະລີສັງຄາຫະກະເທບພະບຸດດ້ວຍຄາຖາ ວ່າ

ມາຕະລີ ທ່ານຈົ່ງຫຼີກຫຼີກຮັງນົກໃນປ່າງິ້ວ

ໂດຍອວ່າຍໜ້າຫັນລົດກັບ
ເຖິງເຮົາຈະຕ້ອງສະລະຊີວິດໃຫ້ພວກອະສູນກໍຕາມ
ຂໍຢ່າໃຫ້ນົກເຫຼົ່ານີ້ພັດພາກຈາກຮັງເລີຍ

ພິກຂຸທັງຫຼາຍ ມາຕະລີສັງຄາຫະກະເທບພະບຸດ ຮັບພຣະດຳຣັດຂອງທ້າວສັກກະຈອມເທບວ່າ ຂໍຄວາມຈະເລີນຈົ່ງມີແດ່ພຣະອົງແລ້ວໃຫ້ລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ອວ່າຍຫັນກັບ ດັ່ງນັ້ນ ພວກອະສູນຄິດວ່າ ບັດນີ້ ລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ຂອງທ້າວສັກກະຈອມເທບອວ່າຍຫັນກັບມາແລ້ວ ພວກເທບຄົງຈັກເຮັດສົງຄາມກັບພວກອະສູນເປັນເທື່ອທີ ໘ ອີກແນ່ນອນ ພວກອະສູນຕ່າງຕົກໃຈໜີກັບເຂົ້າໄປສູ່ເມືອງອະສູນ ໄຊຊະນະຄັ້ງນີ້ເປັນໄຊຊະນະຍ້ອນທຳຂອງທ້າວສັກກະຈອມເທບ ດ້ວຍປະການດັ່ງນີ້

**ກຸລາວະກະສູດທີ ໖ ຈົບ**

# ໗. ນະທຸບພິຍະສູດ

## ວ່າດ້ວຍການບໍ່ປະທຸດສະຮ້າຍ

[໘໕๓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເທບຊົງຫຼີບຫຼີກປະທັບ ພັກຜ່ອນຢູ່ໃນບ່ອນພັກເກີດຄວາມຮ່ຳເພິງແນວນີ້ວ່າ ເຮົາບໍ່ຄວນປະທຸດສະຮ້າຍແມ່ນແກ່ຜູ້ທີ່ເປັນຂ້າເສິກຕໍ່ເຮົາດັ່ງນັ້ນ ທ້າວເວປະຈິດຕິຈອມອະສູນໄດ້ຮູ້ຄວາມຮ່ຳເພິງຂອງທ້າວສັກກະ ຈອມເທບດ້ວຍໃຈຂອງຕົນແລ້ວ ເຂົ້າໄປຫາທ້າວສັກກະຈອມເທບຈົນຮອດບ່ອນຢູ່ ທ້າວສັກກະຈອມເທບໄດ້ທອດພຣະເນດເຫັນທ້າວເວປະຈິດຕິຈອມອະສູນມາແຕ່ໄກແນວນັ້ນ ຈຶ່ງໄດ້ຕັດກັບທ້າວເວປະຈິດຕິຈອມອະສູນດັ່ງນີ້ວ່າ ຢຸດເທີ້ນ ທ່ານທ້າວເວປະຈິດຕິ ທ່ານຖືກຈັບແລ້ວ

ທ້າວເວປະຈິດຕິຖາມວ່າ ທ່ານຜູ້ນິຣະທຸກ ທ່ານລະຖິ້ມຄວາມຄິດຄັ້ງກ່ອນຂອງທ່ານແລ້ວແມ່ນບໍ? ທ້າວສັກກະຕັດວ່າ ທ່ານທ້າວເວປະຈິດຕິ ຂໍໃຫ້ທ່ານຈົ່ງສາບານເພື່ອທີ່ຈະບໍ່ປະທຸດສະຮ້າຍຕໍ່ເຮົາ

ທ້າວເວປະຈິດຕິກ່າວຄາຖາ ວ່າ

ທ່ານທ້າວສຸຊຳປະຕິ ບາບຂອງຄົນເວົ້າຕົວະ
ບາບຂອງຄົນຜູ້ຕິຕຽນພຣະອະຣິຍະ
ບາບຂອງຄົນຜູ້ປະທຸດສະຮ້າຍຕໍ່ມິດ

ແລະບາບຂອງຄົນບໍ່ຮູ້ບຸນຄຸນ
ຈຶ່ງຖືກຜູ້ປະທຸດສະຮ້າຍທ່ານເທີ້ນ

**ນະທຸບພິຍະສູດທີ ໗ ຈົບ**

# ໘. ເວໂຣຈະນະອະສຸຣິນທະສູດ

## ວ່າດ້ວຍທ້າວເວໂຣຈະນະຈອມອະສູນ

[໘໕໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫຼີກຫຼີກປະທັບພັກຜ່ອນຢູ່ໃນບ່ອນພັກກາງເວັນ ຄັ້ງນັ້ນ ທ້າວສັກກະຈອມເທບກັບທ້າວເວໂຣຈະນະຈອມອະສູນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ຢືນອີງບານປະຕູຄົນລະຂ້າງ ລຳດັບນັ້ນ ທ້າວເວໂຣຈະນະຈອມອະສູນໄດ້ກ່າວຄາຖານີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ບຸຣຸດຄວນພະຍາຍາມໄປຈົນກວ່າປະໂຫຍດຈະສຳເລັດ
ປະໂຫຍດອັນງົດງາມຢູ່ທີ່ຄວາມສຳເລັດ
ນີ້ເປັນຄຳເວົ້າຂອງເວໂຣຈະນະ

ທ້າວສັກກະຈອມເທບຕັດ ວ່າ

ບຸຣຸດຄວນພະຍາຍາມໄປຈົນກວ່າປະໂຫຍດຈະສຳເລັດ
ປະໂຫຍດທັງຫຼາຍອັນງົດງາມຢູ່ທີ່ຄວາມສຳເລັດ
ປະໂຫຍດອື່ນທີ່ຍິ່ງກວ່າຂັນຕິບໍ່ມີ

ທ້າວເວໂຣຈະນະຈອມອະສູນກ່າວ ວ່າ

ສັບພະສັດມີຄວາມຕ້ອງການໃນສິ່ງນັ້ນ ໆ ຕາມສົມຄວນ
ສ່ວນການບໍຣິໂພກຂອງສັບພະສັດ ມີການປຸງແຕ່ງເປັນຢ່າງດີ
ປະໂຫຍດທັງຫຼາຍອັນງົດງາມຢູ່ທີ່ຄວາມສຳເລັດ
ນີ້ເປັນຄຳເວົ້າຂອງເວໂຣຈະນະ

ທ້າວສັກກະຈອມເທບຕັດ ວ່າ

ສັບພະສັດມີຄວາມຕ້ອງການໃນສິ່ງນັ້ນ ໆ ຕາມສົມຄວນ

ສ່ວນການບໍຣິໂພກຂອງສັບພະສັດ ມີການປຸງແຕ່ງເປັນຢ່າງດີ
ປະໂຫຍດທັງຫຼາຍອັນງົດງາມຢູ່ທີ່ຄວາມສຳເລັດ
ປະໂຫຍດອື່ນທີ່ຍິ່ງກວ່າຂັນຕິບໍ່ມີ

**ເວໂຣຈະນະອະສຸຣິນທະສູດທີ ๗ ຈົບ**

# ๘. ອາຣັນຍະກະສູດ

## ວ່າດ້ວຍພິກຂຸຜູ້ຢູ່ໃນປ່າ

[໔໕໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ລືສີຜູ້ມີສີນ ມີກັນລະຍານະທຳຈຳນວນຫຼາຍອາໄສຢູ່ໃນກຸຕິທີ່ມຸງດ້ວຍໃບໄມ້ໃນແຄມປ່າ ຄັ້ງນັ້ນ ທ້າວສັກກະຈອມເທບກັບທ້າວເວປະຈິດຕິ ຈອມອະສູນ ເຂົ້າໄປຫາລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນຮອດບ່ອນຢູ່ ຄັ້ງນັ້ນ ທ້າວເວປະຈິດຕິຈອມອະສູນ ຊົງສະຫຼອງພຣະບາດໜາຫຼາຍຊັ້ນ ຊົງພຣະຂັນ ມີຜູ້ກັ້ງເສດຕະສັດໃຫ້ເຂົ້າໄປສູ່ອາສົມທາງປະຕູພິເສດ ເຂົ້າໄປໃກ້ລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນຫ່າງບໍ່ເຖິງວາ ສ່ວນທ້າວສັກກະຈອມເທບຊົງຖອດສະຫຼອງພຣະບາດ ປະທານພຣະຂັນໃຫ້ແກ່ຜູ້ອື່ນ ຮັບສັ່ງໃຫ້ຫຸບເສດຕະສັດ ສະເດັດເຂົ້າໄປທາງອາສົມໂດຍທາງປະຕູເຂົ້າອອກ ປະຄອງອັນຊະລີນອບນ້ອມລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນແລ້ວຢູ່ໃຕ້ລົມ ຄັ້ງນັ້ນ ລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນ ໄດ້ກ່າວກັບທ້າວສັກກະຈອມເທບດ້ວຍຄາຖາ ວ່າ

ກິ່ນຂອງລືສີຜູ້ປະພຶດພົດມາດົນ
ຍ່ອມຟຸ້ງຈາກກາຍໄປຕາມລົມ
ທ້າວສະຫັດສະໄນ[๑] ພຣະອົງຈົ່ງຖອຍໄປຈາກບ່ອນນີ້
ທ້າວເທວະຣາດ ກິ່ນຂອງພວກລືສີ ບໍ່ສະອາດ

ທ້າວສັກກະຕັດຕອບ ວ່າ

ກິ່ນຂອງພວກລືສີຜູ້ປະພຶດພົດມາດົນ
ຍ່ອມຟຸ້ງຈາກກາຍໄປຕາມລົມ
ທ່ານຜູ້ຈະເລີນ ພວກຂ້າພະເຈົ້າຕ່າງກໍມຸ້ງຫວັງກິ່ນນີ້
ຄືຄົນມຸ້ງຫວັງຮວດດອກໄມ້ອັນວິຈິດເທິງຫົວ ສັນນັ້ນ
ພວກເທບບໍ່ມີຄວາມສຳຄັນໃນກິ່ນ

ຂອງຜູ້ມີສີນນີ້ວ່າ ເປັນສິ່ງປະຕິກູນດອກຂ້ານ້ອຍ

**ອາຣັນຍະກະສູດທີ ໙ ຈົບ**

# ໑໐. ສະມຸດທະກະສູດ

## ວ່າດ້ວຍພິກຂຸຜູ້ຢູ່ໃກ້ຝັ່ງສະມຸດ

[໔໕໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ລືສີຜູ້ມີສີນ ມີກັນລະຍານະທຳຈຳນວນຫຼາຍອາໄສຢູ່ໃນກຸຕິທີ່ມຸງດ້ວຍໃບໄມ້ໃກ້ຝັ່ງສະມຸດ ສະໄໝນັ້ນ ສົງຄາມລະຫວ່າງພວກເທບກັບອະສູນຕີປະຊິດຕິດກັນຢູ່ ຄັ້ງນັ້ນ ລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ພວກເທບດຳລົງຢູ່ໃນທຳ ພວກອະສູນບໍ່ດຳລົງຢູ່ໃນທຳ ໄພຈາກພວກອະສູນເພິ່ງເກີດ ແກ່ພວກເຮົາ ທາງທີ່ດີພວກເຮົາເພິ່ງເຂົ້າໄປຫາທ້າວສຳພະຣະຈອມອະສູນແລ້ວຂໍອະໄພທ່ານເທີ້ນ ຄັ້ງນັ້ນ ລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນ ໄດ້ຫາຍໂຕຈາກກຸຕິທີ່ມຸງດ້ວຍໃບໄມ້ ໃກ້ຝັ່ງສະມຸດໄປຜາກົດຢູ່ກົງໜ້າທ້າວສຳພະຣະຈອມອະສູນ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ຄັ້ງນັ້ນ ລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນ ໄດ້ກ່າວ ກັບທ້າວສຳພະຣະ ຈອມອະສູນດ້ວຍຄາຖາ ວ່າ

ພວກລືສີມາຂໍອະໄພກັບທ່ານທ້າວສຳພະຣະ
ການໃຫ້ໄພຫຼືໃຫ້ອະໄພ ທ່ານສາມາດເຮັດໄດ້

ທ້າວສຳພະຣະຈອມອະສູນໄດ້ກ່າວ ວ່າ

ບໍ່ມີການໃຫ້ອະໄພແກ່ພວກລືສີ
ຜູ້ຊົ່ວຊ້າ ຜູ້ຄົບຫາທ້າວສັກກະ
ເຮົາຈັກໃຫ້ແຕ່ໄພທີ່ນັ້ນແກ່ພວກຜູ້ຂໍອະໄພ

ພວກລືສີກ່າວ ວ່າ

ທ່ານໃຫ້ໄພທີ່ນັ້ນແກ່ພວກເຮົາຜູ້ຂໍອະໄພ
ພວກເຮົາຂໍຮັບເອົາແຕ່ອະໄພແນວດຽວ
ສ່ວນໄພຈົ່ງເປັນຂອງທ່ານເທີ້ນ

ບຸກຄົນຫວ່ານພືດແນວໃດ ຍ່ອມໄດ້ຜົນແນວນັ້ນ
ຄົນເຮັດດີຍ່ອມໄດ້ດີ ເຮັດຊົ່ວຍ່ອມໄດ້ຊົ່ວ
ຜູ້ຈະເລີນ ທ່ານຫວ່ານພືດລົງໄປແລ້ວ ທ່ານຈັກຕ້ອງສະເຫວີຍຜົນຂອງມັນ

ພິກຂຸທັງຫຼາຍ ຄັ້ງນັ້ນ ລືສີຜູ້ມີສີນ ມີກັນລະຍານະທຳເຫຼົ່ານັ້ນ ໄດ້ສາບແຊ່ງທ້າວສຳພະຣະຈອມອະສູນ ແລ້ວຫາຍໂຕໄປຕໍ່ໜ້າທ້າວສຳພະຣະຈອມອະສູນ ໄປຜາກົດຢູ່ກຸຕິທີ່ມຸງດ້ວຍໃບໄມ້ໃກ້ຝັ່ງສະມຸດ ຄື ບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າສັນນັ້ນ ຄັ້ງນັ້ນ ທ້າວສຳພະຣະຈອມອະສູນຖືກລືສີຜູ້ມີສີນ ມີກັນລະຍານະທຳສາບແຊ່ງແລ້ວ ໄດ້ຂ່າວວ່າ ໃນຄືນນັ້ນ ຕົກໃຈຫວາດຫວັ່ນເຖິງສາມຄັ້ງ

**ສະມຸດທະກະສູດທີ ໑໐ ຈົບ**

**ວັກທີ ໑ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

| | |
|---|---|
| ໑. ສຸວີຣະສູດ | ໒. ສຸສີມະສູດ |
| ໓. ທະຊັກຄະສູດ | ໔. ເວປະຈິດຕິສູດ |
| ໕. ສຸພາສິຕະຊະຍະສູດ | ໖. ກຸລາວະກະສູດ |
| ໗. ນະທຸບພິຍະສູດ | ໘. ເວໂຣຈະນະອະສຸຣິນທະສູດ |
| ໙. ອາຣັນຍະກະສູດ | ໑໐. ສະມຸດທະກະສູດ |

# ໒. ທຸຕິຍະວັກ

## ໝວດທີ ໒

# ໑. ປະຖົມເທວະສູດ

## ວ່າດ້ວຍເທບ ສູດທີ ໑

[໒໕໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງ ຍັງເປັນມະນຸດຢູ່ໃນການກ່ອນໄດ້ສະມາທານວັດຕະບົດ ໗ ປະການຢ່າງບໍຣິບູນ ຍ້ອນສະມາທານວັດຕະບົດ ໗ ປະການນີ້ ຈຶ່ງໄດ້ເປັນທ້າວສັກກະ

ວັດຕະບົດ ໗ ປະການ ອັນໃດແດ່ ຄື

໑. ເຮົາເພິ່ງລ້ຽງມານດາແລະບິດາຕະຫຼອດຊີວິດ
໒. ເຮົາເພິ່ງປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນຕະຫຼອດຊີວິດ
໓. ເຮົາເພິ່ງເວົ້າຈາແຕ່ຄຳອ່ອນຫວານຕະຫຼອດຊີວິດ
໔. ເຮົາບໍ່ເພິ່ງເວົ້າຄຳສັບສໍ່ຕະຫຼອດຊີວິດ
໕. ເຮົາເພິ່ງມີໃຈປາສະຈາກຄວາມຂີ້ຖີ່ທີ່ເປັນມົນທິນ ຢູ່ຄອງເຮືອນມີການບໍລິຈາກເປັນປະຈຳ ມີມືຊຸ່ມດ້ວຍທານຢູ່ສະເໝີ ຍິນດີໃນການເສຍສະລະ ຄວນທີ່ຜູ້ອື່ນຈະຂໍ ຍິນດີໃນການແຈກຈ່າຍທານຕະຫຼອດຊີວິດ
໖. ເຮົາເພິ່ງເວົ້າແຕ່ຄຳສັດຕະຫຼອດຊີວິດ
໗. ເຮົາບໍ່ເພິ່ງໂກດຕະຫຼອດຊີວິດ ຖ້າແມ່ນຄວາມໂກດເພິ່ງເກີດຂຶ້ນແກ່ເຮົາ ເຮົາກໍຈະກຳຈັດໂດຍທັນທີ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນໄດ້ສະມາທານວັດຕະບົດ ໗ ປະການນີ້ຢ່າງບໍຣິບູນ ຍ້ອນສະມາທານວັດຕະບົດ ໗ ປະການ ຈຶ່ງໄດ້ເປັນທ້າວສັກກະ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ເທບຊັ້ນຕາວະຕິງສາກ່າວເຖິງນໍຣະຊົນຜູ້ລ້ຽງມານດາແລະບິດາ
ມີປົກກະຕິປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ
ເຈລະຈາແຕ່ຄຳອ່ອນຫວານ ສະມານມິດໄມຕີ
ລະຄຳສັບສໍ່ທີ່ເຮັດໃຫ້ແຕກແຍກກັນ
ປະກອບໃນອຸບາຍກຳຈັດຄວາມຂີ້ຖີ່ ມີວາຈາສັດ
ຄອບງຳຄວາມໂກດໄດ້ນັ້ນແລວ່າ ເປັນສັດຕະບຸຣຸດ

**ປະຖົມເທວະສູດທີ່ ໑ ຈົບ**

# ໔. ທຸຕິຍະເທວະສູດ

## ວ່າດ້ວຍເທບ ສູດທີ ໔

[໔໕໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຣັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ຯລຯ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງ ຍັງເປັນມະນຸດຢູ່ໃນການກ່ອນເປັນມານົບຊື່ມະຄະ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວມະຄະວານ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງ ຍັງເປັນມະນຸດຢູ່ໃນການກ່ອນ ໄດ້ໃຫ້ທານມາກ່ອນ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວປຸຣິນທະທະ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງ ຍັງເປັນມະນຸດຢູ່ໃນການກ່ອນ ໄດ້ໃຫ້ທານໂດຍເຄົາລົບ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວສັກກະ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນ ໄດ້ໃຫ້ບ່ອນພັກອາໄສ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວວາສະວະ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ຊົງສາມາດຄິດເນື້ອຄວາມໄດ້ເປັນພັນພຽງບຶດດຽວ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວສະຫັດສະໄນ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ຊົງມີນາງອະສຸຣະກັນຍານາມວ່າ ສຸຊາ ເປັນປະຊາບໍດີ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວສຸຊຳປະຕິ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ສະເຫວີຍຣາດຊະສົມບັດອັນມີຄວາມເປັນໃຫຍ່ຍິ່ງດ້ວຍຄວາມເປັນໃຫຍ່ແຫ່ງເທບຊັ້ນຕາວະຕຶງສາ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວເທວານະມິນທະ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນ ໄດ້ສະມາທານວັດຕະບົດ ໗ ປະການຢ່າງບໍຣິບູນ ຍ້ອນສະມາທານວັດຕະບົດ ໗ ປະການ ຈຶ່ງໄດ້ເປັນທ້າວສັກກະ

ວັດຕະບົດ ໗ ປະການ ອັນໃດແດ່ ຄື

໑. ເຮົາເພິ່ງລ້ຽງມານດາແລະບິດາຕະຫຼອດຊີວິດ
໒. ເຮົາເພິ່ງປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນຕະຫຼອດຊີວິດ
໓. ເຮົາເພິ່ງເວົ້າຈາແຕ່ຄໍາອ່ອນຫວານຕະຫຼອດຊີວິດ
໔. ເຮົາບໍ່ເພິ່ງເວົ້າຄໍາສັບສໍ່ຕະຫຼອດຊີວິດ
໕. ເຮົາເພິ່ງມີໃຈປາສະຈາກຄວາມຂີ້ຖີ່ທີ່ເປັນມົນທິນ ຢູ່ຄອງເຮືອນ ມີການບໍລິຈາກເປັນປະຈໍາ ມີມືຊຸ່ມເປັນປະຈໍາ ຍິນດີໃນການເສຍສະລະ ຄວນທີ່ຜູ້ອື່ນຈະຂໍ ຍິນດີໃນການແຈກຈ່າຍທານຕະຫຼອດຊີວິດ
໖. ເຮົາເພິ່ງເວົ້າແຕ່ຄໍາສັດຕະຫຼອດຊີວິດ
໗. ເຮົາບໍ່ເພິ່ງໂກດຕະຫຼອດຊີວິດ ຖ້າແມ່ນຄວາມໂກດເພິ່ງເກີດຂຶ້ນແກ່ເຮົາ ເຮົາກໍຈະກໍາຈັດໂດຍທັນທີ

ພິກຂຸທັງຫຼາຍ ທ້າວສັກກະຈອມເທບ ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນ ໄດ້ສະມາທານວັດຕະບົດ ໗ ປະການນີ້ຢ່າງບໍຣິບູນ ຍ້ອນສະມາທານວັດຕະບົດ ໗ ປະການ ຈຶ່ງໄດ້ເປັນທ້າວສັກກະ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ໆລໆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ເທບຊັ້ນຕາວະຕຶງສາກ່າວເຖິງນໍຣະຊົນຜູ້ລ້ຽງມານດາແລະບິດາ
ມີປົກກະຕິປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ
ເຈລະຈາແຕ່ຄໍາອ່ອນຫວານ ສະມານມິດໄມຕີ
ລະຄໍາສັບສໍ່ທີ່ເຮັດໃຫ້ແຕກແຍກກັນ
ປະກອບໃນອຸບາຍກໍາຈັດຄວາມຂີ້ຖີ່ ມີວາຈາສັດ
ຄອບງໍາຄວາມໂກດໄດ້ນັ້ນແລວ່າ ເປັນສັດຕະບຸຣຸດ

**ທຸຕິຍະເທວະສູດທີ່ ໒ ຈົບ**

# ໓. ຕະຕິຍະເທວະສູດ

## ວ່າດ້ວຍເທບ ສູດທີ ໓

[໔໕໙] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ເຈົ້າລິດສະຫວີນາມວ່າ ມະຫາລີ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກ

ເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ້າວສັກກະຈອມເທບບໍ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ມະຫາລິ ຕະຖາຄົດເຫັນທ້າວສັກກະຈອມເທບຢູ່

ເຈົ້າມະຫາລິໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍຜູ້ທີ່ພຣະອົງຊົງເຫັນນັ້ນ ຄົງເປັນຮູບຈໍາລອງຂອງທ້າວສັກກະແນ່ນອນ ຍ້ອນວ່າທ້າວສັກກະຈອມເທບຍາກທີ່ໃຜ ໆ ຈະເຫັນໄດ້ງ່າຍ ຂ້ານ້ອຍ

ມະຫາລິ ຕະຖາຄົດຮູ້ຈັກທ້າວສັກກະນໍາ ຮູ້ທໍາທີ່ເຮັດໃຫ້ເປັນທ້າວສັກກະດ້ວຍ ທັງຍັງຮູ້ເຖິງທໍາທີ່ທ້າວສັກກະສະມາທານແລ້ວໄດ້ເປັນທ້າວສັກກະດ້ວຍ

ມະຫາລິ ທ້າວສັກກະຈອມເທບ ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນເປັນມານົບຊື່ມະຄະ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວມະຄະວານ

ມະຫາລິ ທ້າວສັກກະຈອມເທບ ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນ ໄດ້ໃຫ້ທານມາກ່ອນ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວປຸຣິນທະທະ

ມະຫາລິ ທ້າວສັກກະຈອມເທບ ເມື່ອຄັ້ງ ຍັງເປັນມະນຸດຢູ່ໃນການກ່ອນ ໄດ້ໃຫ້ທານໂດຍເຄົາລົບ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວສັກກະ

ມະຫາລິ ທ້າວສັກກະຈອມເທບ ເມື່ອຄັ້ງ ຍັງເປັນມະນຸດຢູ່ໃນການກ່ອນ ໄດ້ໃຫ້ທີ່ພັກອາໄສ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວວາສະວະ

ມະຫາລິ ທ້າວສັກກະຈອມເທບ ຊົງສາມາດຄິດເນື້ອຄວາມເປັນພັນໄດ້ພຽງບຶດດຽວ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວສະຫັດສະໄນ

ມະຫາລິ ທ້າວສັກກະຈອມເທບ ຊົງມີນາງອະສຸຣະກັນຍານາມວ່າ ສຸຊາ ເປັນປະຊາບໍດີ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວສຸຊໍາປະຕິ

ມະຫາລິ ທ້າວສັກກະຈອມເທບ ສະເຫວີຍຣາດຊະສົມບັດອັນມີຄວາມເປັນໃຫຍ່ຍິ່ງດ້ວຍຄວາມເປັນໃຫຍ່ແຫ່ງເທບຊັ້ນຕາວະຕິງສາ ຍ້ອນເຫດນັ້ນ ຈຶ່ງໄດ້ພຣະນາມວ່າ ທ້າວເທວານະມິນທະ

ມະຫາລິ ທ້າວສັກກະຈອມເທບ ເມື່ອຄັ້ງ ຍັງເປັນມະນຸດຢູ່ໃນການກ່ອນ ໄດ້ສະມາທານວັດຕະບົດ ໗ ປະການນີ້ຢ່າງບໍຣິບູນ ຍ້ອນສະມາທານວັດຕະບົດ ໗ ປະການ ຈຶ່ງໄດ້ເປັນທ້າວສັກກະ

ວັດຕະບົດ ໗ ປະການ ອັນໃດແດ່ ຄື

໑. ເຮົາເພິ່ງລ້ຽງມານດາແລະບິດາຕະຫຼອດຊີວິດ

໔. ເຮົາເພິ່ງປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນຕະຫຼອດຊີວິດ
໓. ເຮົາເພິ່ງເວົ້າຈາແຕ່ຄຳອ່ອນຫວານຕະຫຼອດຊີວິດ
໔. ເຮົາບໍ່ເພິ່ງເວົ້າຄຳສັບສໍ່ຕະຫຼອດຊີວິດ
໕. ເຮົາເພິ່ງມີໃຈປາສະຈາກຄວາມຂີ້ຖີ່ທີ່ເປັນມົນທິນ ຢູ່ຄອງເຮືອນມີການບໍລິຈາກເປັນປະຈຳ ມີມືຊຸ່ມເປັນປະຈຳ ຍິນດີໃນການເສຍສະລະ ຄວນທີ່ຜູ້ອື່ນຈະຂໍ ຍິນດີໃນການແຈກຈ່າຍທານຕະຫຼອດຊີວິດ
໖. ເຮົາເພິ່ງເວົ້າແຕ່ຄຳສັດຕະຫຼອດຊີວິດ
໗. ເຮົາບໍ່ເພິ່ງໂກດຕະຫຼອດຊີວິດ ຖ້າແມ່ນຄວາມໂກດເພິ່ງເກີດຂຶ້ນແກ່ເຮົາ ເຮົາກໍຈະກຳຈັດໂດຍທັນທີ

ມະຫາລີ ທ້າວສັກກະຈອມເທບ ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນ ໄດ້ສະມາທານວັດຕະບົດ ໗ ປະການນີ້ຄົບບໍລິບູນ ຍ້ອນສະມາທານວັດຕະບົດ ໗ ປະການ ຈຶ່ງໄດ້ເປັນທ້າວສັກກະ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ໗ລ໗ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ເທບຊັ້ນຕາວະຕິງສາກ່າວເຖິງນໍຣະຊົນຜູ້ລ້ຽງມານດາແລະບິດາ
ມີປົກກະຕິປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ
ເຈລະຈາແຕ່ຄຳອ່ອນຫວານ ສະມານມິດໄມຕີ
ລະຄຳສັບສໍ່ທີ່ເຮັດໃຫ້ແຕກແຍກກັນ
ປະກອບໃນອຸບາຍກຳຈັດຄວາມຂີ້ຖີ່ ມີວາຈາສັດ
ຄອບງຳຄວາມໂກດໄດ້ນັ້ນແລວ່າ ເປັນສັດຕະບຸຣຸດ

**ຕະຕິຍະເທວະສູດທີ ໓ ຈົບ**

# ໔. ທະລິດທະສູດ

## ວ່າດ້ວຍຜູ້ຂັດສົນ

[໔໖໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ຂຶ້ນມາ ວ່າ

ພິກຂຸທັງຫຼາຍ ເລື່ອງເຄີຍມີມາແລ້ວ ໃນນະຄອນຣາດຊະຄືນີ້ເອງ ໄດ້ມີບຸຣຸດຄົນໜຶ່ງເປັນຄົນຂັດສົນ ເປັນຄົນກຳພ້າ ເປັນຄົນຍາກໄຮ້ ແຕ່ເຂົາຍຶດໝັ້ນສັດທາ ສີນ ສຸຕະ ຈາຄະ ແລະປັນຍາ ໃນທຳວິໄນທີ່ເຮົາປະກາດແລ້ວ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງສຸຄະຕິໂລກສະຫວັນ ຄືຄວາມເປັນສະຫາຍຂອງເທບຊັ້ນຕາວະຕິງສາ ເທບພະບຸດອົງນັ້ນຮຸ່ງເຮືອງກວ່າເທບເຫຼົ່າອື່ນດ້ວຍຣັດສະໝີແລະຍົດ ໄດ້ຂ່າວວ່າ ໃນຄັ້ງນັ້ນ ພວກເທບຊັ້ນຕາວະຕິງສາພາກັນ ກ່າວໂທດ ຕິຕຽນວ່າ ທ່ານຜູ້ຈະເລີນທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ເທບພະບຸດອົງນີ້ເມື່ອຄັ້ງຍັງເປັນມະນຸດຢູ່ໃນການກ່ອນ ເປັນຄົນຂັດສົນ ເປັນຄົນກຳພ້າ ເປັນຄົນຍາກໄຮ້ ຫຼັງຈາກຕາຍແລ້ວແຕ່ເຂົ້າເຖິງສຸຄະຕິໂລກສະຫວັນ ຄື ຄວາມເປັນສະຫາຍຂອງເທບຊັ້ນຕາວະຕິງສາ ຍ່ອມຮຸ່ງເຮືອງກວ່າເທບເຫຼົ່າອື່ນດ້ວຍຣັດສະໝີແລະຍົດ

ພິກຂຸທັງຫຼາຍ ຄັ້ງນັ້ນ ທ້າວສັກກະຈອມເທບຮັບສັ່ງກັບເທບຊັ້ນຕາວະຕິງສາວ່າ ທ່ານຜູ້ນິຣະທຸກ ທ່ານທັງຫຼາຍຢ່າກ່າວໂທດຕໍ່ເທບພະບຸດນີ້ເລີຍ ເທບພະບຸດນີ້ ເມື່ອຄັ້ງຍັງເປັນມະນຸດໃນການກ່ອນ ຍຶດໝັ້ນສັດທາ ສີນ ສຸຕະ ຈາຄະ ແລະປັນຍາ ໃນທຳວິໄນທີ່ພຣະຕະຖາຄົດປະກາດແລ້ວ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງ ສຸກຄະຕິໂລກສະຫວັນ ຄື ຄວາມເປັນສະຫາຍຂອງເທບຊັ້ນຕາວະຕິງສາ ຍ່ອມຮຸ່ງເຮືອງກວ່າເທບເຫຼົ່າອື່ນດ້ວຍຣັດສະໝີແລະຍົດ

ພິກຂຸທັງຫຼາຍ ລຳດັບນັ້ນ ທ້າວສັກກະຈອມເທບ ເມື່ອຊົງຍິນດີກັບພວກເທບຊັ້ນ ຕາວະຕິງສາ ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ ໃນເວລານັ້ນ ວ່າ

ຜູ້ໃດມີສັດທາໃນພຣະຕະຖາຄົດຕັ້ງໝັ້ນບໍ່ຫວັ່ນໄຫວ<br>
ມີສີນອັນງາມ ເປັນສີນທີ່ພຣະອະຣິຍະພໍໃຈ[໑]ແລະສັນເສີນ<br>
ມີຄວາມເຫຼື້ອມໃສໃນພຣະສົງ ແລະ ມີຄວາມເຫັນກົງ[໒]<br>
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າ ເປັນຄົນບໍ່ຂັດສົນ<br>
ຊີວິດຂອງເຂົາກໍບໍ່ສູນເປົ່າ<br>
ຍ້ອນແນວນັ້ນ ບຸກຄົນຜູ້ມີປັນຍາ ເມື່ອຣະນຶກເຖິງ<br>
ຄຳສອນຂອງພຣະພຸດທະເຈົ້າທັງຫຼາຍ ຄວນໝັ້ນປະກອບສັດທາ<br>
ສີນ ຄວາມເຫຼື້ອມໃສ[໓] ແລະ ການເຫັນທຳ[໔]

**ທະລິດທະສູດທີ ໔ ຈົບ**

# ໕. ອາມະເນີຍຍະກະສູດ
## ວ່າດ້ວຍສະຖານທີ່ໜ້າອອນຊອນ

[໔໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ້າວສັກກະຈອມເທບສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ສະຖານທີ່ແນວໃດນໍ? ເປັນສະຖານທີ່ໜ້າອອນຊອນ

ພຣະຜູ້ມີພຣະພາກເຈົ້າຕັດດ້ວຍພຣະຄາຖາ ວ່າ

ອາຣາມອັນວິຈິດ ປ່າອັນວິຈິດ
ສະໂບກຂະຣະນີທີ່ສ້າງໄວ້ຢ່າງດີ
ຍັງບໍ່ເຖິງເສດ ໑ ສ່ວນ ໑໖ ແຫ່ງພູມສະຖານອັນອອນຊອນຂອງມະນຸດ
ພຣະອະຣະຫັນທັງຫຼາຍ ຢູ່ໃນບ່ອນໃດ ເປັນເຮືອນຫຼືເປັນປ່າ
ເປັນບ່ອນທຸບ ຫຼື ເປັນບ່ອນໂນນກໍຕາມ
ບ່ອນນັ້ນ ເປັນພູມສະຖານທີ່ໜ້າອອນຊອນ[໑]

**ອາມະເນີຍຍະກະສູດທີ ໕ ຈົບ**

# ໖. ຍະຊະມານະສູດ
## ວ່າດ້ວຍການບູຊາ

[໔໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ທ້າວສັກກະຈອມເທບສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບ ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

ເມື່ອມະນຸດທັງຫຼາຍຜູ້ເປັນສັດ
ປາຖະໜາບຸນ ບູຊາຢູ່ ທຳບຸນເຊິ່ງໃຫ້ເກີດຜົນ
ທານທີ່ໃຫ້ແລ້ວໃນບ່ອນໃດມີຜົນຫຼາຍ ຂ້ານ້ອຍ[໒]

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ທ່ານຜູ້ປະຕິບັດດີ ໔ ຈຳພວກ
ທ່ານຜູ້ຕັ້ງຢູ່ໃນຜົນ ໔ ຈຳພວກ
ນັ້ນຄື ພຣະສົງ ເປັນຜູ້ປະຕິບັດກົງ
ຕັ້ງໝັ້ນຢູ່ໃນສິນ ສະມາທິ ແລະປັນຍາ
ເມື່ອມະນຸດທັງຫຼາຍຜູ້ເປັນສັດ
ປາຖະໜາບຸນ ບູຊາຢູ່ ທຳບຸນເຊິ່ງໃຫ້ເກີດຜົນ
ທານທີ່ໃຫ້ແລ້ວໃນພຣະສົງມີຜົນຫຼາຍ[១]

**ຍະຊະມານະສູດທີ ໑ ຈົບ**

# ໗. ວັນທະນາສູດ

## ວ່າດ້ວຍການຖວາຍບັງຄົມ

[໔໑໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີກຫຼີກປະທັບພັກຜ່ອນຢູ່ໃນທີ່ພັກກາງເວັນ ຂະນະນັ້ນ ທ້າວສັກກະຈອມເທບ ແລະ ທ້າວສະຫຳບໍດີພົມສະເດັດເຂົ້າໄປເຝົ້າຮອດບ່ອນຢູ່ ໄດ້ປະທັບຢືນອີງບານປະຕູຄົນລະຂ້າງ ລຳດັບນັ້ນ ທ້າວສັກກະຈອມເທບໄດ້ຕັດຄາຖານີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ວ່າ

ຂ້າແດ່ ພຣະອົງຜູ້ແກ່ກ້າ ຜູ້ຊະນະສົງຄາມແລ້ວ
ຊົງປົງພາລະລົງແລ້ວ[໒] ຜູ້ບໍ່ມີໜີ້
ຂໍພຣະອົງໂຜດລຸກຂຶ້ນ ສະເດັດຈາຣິກໄປໃນໂລກ
ອັນໜຶ່ງ ດວງພຣະຫະໄທຂອງພຣະອົງລຸດພົ້ນດີແລ້ວ
ຄືດວງຈັນໃນມື້ເພັງ ສັນນັ້ນ

ທ້າວສະຫຳບໍດີພົມຕັດຄ້ານວ່າ ຈອມເທບ ພຣະອົງບໍ່ຄວນຖວາຍບັງຄົມ ພຣະຕະຖາຄົດແນວນີ້ເລີຍ ແຕ່ຄວນຈະຖວາຍບັງຄົມພຣະຕະຖາຄົດແນວນີ້ ວ່າ

ຂ້າແດ່ ພຣະອົງຜູ້ແກ່ກ້າ
ຜູ້ຊະນະສົງຄາມ ຜູ້ນຳໝູ່ ຜູ້ບໍ່ມີໜີ້

ຂໍພຣະອົງໂຜດລຸກຂຶ້ນ ສະເດັດຈາຣິກໄປໃນໂລກ
ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງ
ຈົ່ງຊົງສະແດງທຳໂຜດສັດໂລກເທີ້ນ ຍ້ອນຈັກມີຜູ້ຮູ້ທຳ[១]

**ວັນທະນະສູດທີ ໗ ຈົບ**

# ໘. ປະຖົມສັກກະນະມັດສະນະສູດ

## ວ່າດ້ວຍການນອບນ້ອມຂອງທ້າວສັກກະ ສູດທີ ໑

[໘໖໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ໃນທີ່ນັ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າໄດ້ຕັດດັ່ງນີ້ວ່າ ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເທບຕັດກັບມາຕະລີສັງຄາຫະກະເທບພະບຸດວ່າ ສະຫາຍມາຕະລີ ທ່ານຈົ່ງຈັດກຽມລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ເຮົາຈະໄປສູ່ພື້ນທີ່ອຸທະຍານເພື່ອຊົມພູມິພາກອັນງົດງາມ

ມາຕະລີສັງຄາຫະກະເທບພະບຸດທູນຮັບພຣະດຳຣັດແລ້ວ ຈັດກຽມລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ສຳເລັດແລ້ວຂາບທູນແກ່ທ້າວສັກກະຈອມເທບວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ສຳລັບພຣະອົງຈັດກຽມໄວ້ສຳເລັດແລ້ວຂໍພຣະອົງຊົງຮູ້ການອັນຄວນໃນບັດນີ້ເທີ້ນ

ຄັ້ງນັ້ນ ທ້າວສັກກະຈອມເທບຂະນະສະເດັດລົງຈາກເວຊະຍັນຕະປາສາດ ຊົງປະນົມມືນອບນ້ອມທິດໃຫຍ່ທັງ ໔ ດ້ວຍດີ ຄັ້ງນັ້ນ ມາຕະລີສັງຄາຫະກະເທບພະບຸດໄດ້ຂາບທູນທ້າວສັກກະຈອມເທບດ້ວຍຄາຖາ ວ່າ

ພາມທັງຫຼາຍຜູ້ຈົບໄຕຣເພດ
ກະສັດທັງຫຼາຍໃນພູມິພາກທັງໝົດ
ທ້າວມະຫາຣາດທັງ ໔ ແລະ ທວຍເທບຜູ້ມີຍົດຊັ້ນໄຕຣທິດ
ຍ່ອມນອບນ້ອມພຣະອົງ
ຂ້າແດ່ ທ້າວສັກກະ ເມື່ອເປັນເຊັ່ນນັ້ນ
ພຣະອົງຊົງນອບນ້ອມທ່ານຜູ້ຄວນບູຊາຄົນໃດ
ທ່ານຜູ້ຄວນບູຊາຄົນນັ້ນ ຄືຜູ້ໃດນໍ?

ທ້າວສັກກະຕັດ ວ່າ

ພາມທັງຫຼາຍຜູ້ຈົບໄຕຣເພດ
ກະສັດທັງຫຼາຍໃນພູມີພາກທັງໝົດ
ທ້າວມະຫາຣາດທັງ ໔ ແລະທວຍເທບຜູ້ມີຍົດຊັ້ນຊາວໄຕຣທິດ
ຍ່ອມນອບນ້ອມທ່ານຜູ້ໃດ ເຊິ່ງເປັນຜູ້ສົມບູນດ້ວຍສິນ
ມີຈິດຕັ້ງໝັ້ນຕະຫຼອດການລະນານ ຜູ້ບວດແລ້ວໂດຍຖືກຕ້ອງ
ມີພົມມະຈັນເປັນເບື້ອງໜ້າ

ຄະຫຼືຫັດເຫຼົ່າໃດເປັນຜູ້ທຳບຸນ
ມີສິນ ເປັນອຸປາສົກ ລ້ຽງເບິ່ງພັນລະຍາໂດຍທຳ
ມາຕະລີ ເຮົານອບນ້ອມຄະຫຼືຫັດແລະນັກບວດເຫຼົ່ານັ້ນ

ມາຕະລີສັງຄາຫະກະເທບພະບຸດຂາບທູນ ວ່າ

ຂ້າແດ່ ທ້າວສັກກະ ໄດ້ຂ່າວວ່າ
ພຣະອົງຊົງນອບນ້ອມບຸກຄົນເຫຼົ່າໃດ
ບຸກຄົນເຫຼົ່ານັ້ນ ເປັນຜູ້ປະເສີດທີ່ສຸດໃນໂລກ

ຂ້າແດ່ ທ້າວວາສະວະ ພຣະອົງຊົງນອບນ້ອມບຸກຄົນເຫຼົ່າໃດ
ແມ່ນຂ້າພຣະອົງກໍຂໍນອບນ້ອມແດ່ບຸກຄົນເຫຼົ່ານັ້ນຄືກັນ
ທ້າວມະຄະວາສຸຊຳປະຕິເທວະຣາດ ຜູ້ເປັນປະມຸກ
ເມື່ອຕັດດັ່ງນີ້ແລ້ວ ຊົງນອບນ້ອມທິດທັງ ໔
ສະເດັດຂຶ້ນຣາດຊະລົດກັບໄປ

**ປະຖົມສັກກະນະມັດສະນະສູດທີ ໗ ຈົບ**

## ໙. ທຸຕິຍະສັກກະນມັດສະນະສູດ

### ວ່າດ້ວຍການນອບນ້ອມຂອງທ້າວສັກກະ ສູດທີ ໘

[໘໖໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເພບຮັບສັ່ງກັບມາຕະລີສັງຄາຫະກະເທບພະບຸດວ່າ ສະຫາຍມາຕະລີ ທ່ານຈົ່ງຈັດກຽມລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ເຮົາຈະໄປສູ່ພື້ນທີ່ອຸທະຍານເພື່ອຊົມພູມີພາກອັນງົດງາມ

ມາຕະລີສັງຄາຫະກະເທບພະບຸດທູນຮັບພຣະດຳຣັດແລ້ວ ຈັດກຽມລົດມ້າເຊື່ອງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ສຳເລັດແລ້ວຂາບທູນແກ່ທ້າວສັກກະຈອມເທບວ່າ ຂ້າແດ່ພຣະອົງຜູ້ນິຣະທຸກ ລົດເຊື່ອງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ສຳລັບພຣະອົງຈັດກຽມໄວ້ສຳເລັດແລ້ວຂໍພຣະອົງຊົງຮູ້ການອັນຄວນໃນບັດນີ້ເທີ້ນ

ໄດ້ຮູ້ວ່າ ຄັ້ງນັ້ນ ທ້າວສັກກະຈອມເທບຂະນະສະເດັດລົງຈາກເວຊະຍັນຜາສາດ ຊົງປະນົມມືນອບນ້ອມພຣະຜູ້ມີພຣະພາກເຈົ້າຢູ່ ຄັ້ງນັ້ນ ມາຕະລີສັງຄາຫະກະເທບພະບຸດໄດ້ທູນຖາມທ້າວສັກກະຈອມເທບດ້ວຍຄາຖາວ່າ

ຂ້າແດ່ທ້າວວາສະວະ ເທວະດາແລະມະນຸດທັງຫຼາຍ
ຍ່ອມນອບນ້ອມພຣະອົງທີ່ນັ້ນ ຂ້າແດ່ທ້າວສັກກະ
ເມື່ອເປັນເຊັ່ນນັ້ນ ພຣະອົງຊົງນອບນ້ອມທ່ານຜູ້ຄວນບູຊາຄົນໃດ
ທ່ານຜູ້ຄວນບູຊາຄົນນັ້ນ ຄືຜູ້ໃດນໍ?

ທ້າວສັກກະຕັດຕອບ ວ່າ

ມາຕະລີ ພຣະສຳມາສຳພຸດທະເຈົ້າພຣະອົງໃດ
ໃນໂລກນີ້ ພ້ອມທັງເທວະໂລກ
ເຮົານອບນ້ອມພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ຜູ້ເປັນສາດສະດາ ຜູ້ມີພຣະນາມບໍ່ຕ່ຳຕ້ອຍ

ມາຕະລີ ບຸກຄົນເຫຼົ່າໃດກຳຈັດ ຣາຄະ ໂທສະ
ແລະອະວິດຊາໄດ້ແລ້ວ ບຸກຄົນເຫຼົ່ານັ້ນ ສິ້ນອາສະວະແລ້ວ
ເປັນພຣະອະຣະຫັນ ເຮົານອບນ້ອມບຸກຄົນເຫຼົ່ານັ້ນ
ມາຕະລີ ບຸກຄົນເຫຼົ່າໃດກຳຈັດຣາຄະ ໂທສະ
ກ້າວລ່ວງອະວິດຊາໄດ້ ແຕ່ຍັງເປັນພຣະເສຂະຢູ່
ຍິນດີໃນທຳອັນເປັນເຄື່ອງປາສະຈາກການສັ່ງສົມ
ເປັນຜູ້ບໍ່ຜະໝາດ ຕາມສຶກສາຢູ່
ເຮົານອບນ້ອມບຸກຄົນເຫຼົ່ານັ້ນ

ມາຕະລີສັງຄາຫະກະເທບພະບຸດຂາບທູນ ວ່າ

ຂ້າແດ່ ທ້າວສັກກະ ໄດ້ຂ່າວວ່າ
ພຣະອົງຊົງນອບນ້ອມບຸກຄົນເຫຼົ່າໃດ

ບຸກຄົນເຫຼົ່ານັ້ນເປັນຜູ້ປະເສີດທີ່ສຸດໃນໂລກ
ຂ້າແດ່ ທ້າວວາສະວະ ພຣະອົງຊົງນອບນ້ອມບຸກຄົນເຫຼົ່າໃດ

ແມ່ນຂ້າພຣະອົງກໍຂໍນອບນ້ອມແດ່ບຸກຄົນເຫຼົ່ານັ້ນຄືກັນ
ທ້າວມຄວາສຸຊັມບໍດີເທວະຣາຊະ ຜູ້ເປັນປະມຸກ
ເມື່ອຕັດດັ່ງນີ້ແລ້ວ ຊົງນອບນ້ອມພຣະຜູ້ມີພຣະພາກເຈົ້າ
ສະເດັດຂຶ້ນຣາດຊະລົດກັບໄປ

**ທຸຕິຍະສັກກະນະມັດສະນະສູດທີ ໗ ຈົບ**

# ໑໐. ຕະຕິຍະກັກກະນະມັດສະນະສູດ

## ວ່າດ້ວຍການນອບນ້ອມຂອງທ້າວສັກກະ ສູດທີ ໓

[໘໖໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເທບໄດ້ຕັດກັບມາຕະລີສັງຄາຫະກະເທບພະບຸດວ່າ ສະຫາຍມາຕະລີ ທ່ານຈົ່ງຈັດກຽມລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ເຮົາຈະໄປສູ່ພື້ນທີ່ອຸທະຍານເພື່ອຊົມພູມີພາກອັນງົດງາມ

ມາຕະລີສັງຄາຫະກະເທບພະບຸດທູນຮັບພຣະດຳຣັດແລ້ວ ຈັດກຽມລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ສຳເລັດແລ້ວຂາບທູນແກ່ທ້າວສັກກະຈອມເພບວ່າ ຂ້າແດ່ພຣະອົງ ຜູ້ນິຣະທຸກ ລົດເຊິ່ງທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ສຳລັບພຣະອົງຈັດກຽມໄວ້ສຳເລັດແລ້ວຂໍພຣະອົງຊົງຮູ້ການອັນຄວນໃນບັດນີ້ເທີ້ນ

ໄດ້ຮູ້ວ່າ ຄັ້ງນັ້ນ ທ້າວສັກກະຈອມເທບຂະນະສະເດັດລົງຈາກເວຊະຍັນຜາສາດ ຊົງປະນົມມືນອບນ້ອມພິກຂຸສົງຢູ່ ຄັ້ງນັ້ນ ມາຕະລີສັງຄາຫະກະເທບພະບຸດໄດ້ທູນຖາມທ້າວສັກກະຈອມເທບດ້ວຍຄາຖາ ວ່າ

ນໍຣະຊົນຜູ້ນອນທັບກາຍອັນເປື່ອຍເນົ່າເຫຼົ່ານີ້ຢູ່
ນອບນ້ອມພຣະອົງທໍ່ນັ້ນ ພວກເຂົາຈົມຢູ່ໃນຊາກສົບ[๑]
ເປັນຜູ້ພຽບພ້ອມດ້ວຍຄວາມຫິວແລະຄວາມຢາກ

ຂ້າແດ່ ທ້າວວາສະວະ ຍ້ອນເຫດ ໃດນໍ?
ພຣະອົງຈົ່ງ ຊົງພໍໃຈທ່ານຜູ້ບໍ່ມີເຮືອນເຫຼົ່ານັ້ນ

ຂໍພຣະອົງຕັດບອກມາຣະຍາດຂອງລືສີທັງຫຼາຍ
ຂ້າພຣະອົງຂໍຟັງພຣະດຳຣັດຂອງພຣະອົງ ຂ້ານ້ອຍ

ທ້າວສັກກະຕັດຕອບ ວ່າ

ມາຕະລີ ເຮົາພໍໃຈມາຣະຍາດ
ຂອງທ່ານຜູ້ຮູ້ທີ່ບໍ່ມີເຮືອນເຫຼົ່ານັ້ນ
ຍ້ອນທ່ານເຫຼົ່ານັ້ນເປັນຜູ້ບໍ່ມີຄວາມຫ່ວງໃຍ
ໃນເຮືອນທີ່ທ່ານຈາກໄປ

ບຸກຄົນ ຜູ້ຈະເກັບເຂົ້າເປືອກ
ຂອງທ່ານເຫຼົ່ານັ້ນໄວ້ໃນສາງກໍບໍ່ມີ
ຈະເກັບໄວ້ໃນໝໍ້ກໍບໍ່ມີ ຈະເກັບໄວ້ໃນກະຕ່າກໍບໍ່ມີ
ທ່ານເຫຼົ່ານັ້ນມີຂໍ້ວັດປະຕິບັດດີງາມ
ສະແຫວງຫາອາຫານທີ່ຜູ້ອື່ນຮຸງສຸກດີແລ້ວ
ບຳລຸງອັດຕະພາບດ້ວຍອາຫານນັ້ນ
ທ່ານເຫຼົ່ານັ້ນເປັນນັກປາດ
ກ່າວຄຳສຸພາສິດ ເປັນຜູ້ສະງົບ ປະພຶດສະໝ່ຳສະເໝີ

ມາຕະລີ ພວກເທວະດາຍັງໂກດໃຫ້ອະສູນ
ແລະສັດເປັນຈຳນວນຫຼາຍຍັງໂກດຕໍ່ກັນແລະກັນ
ເມື່ອເຂົາຍັງໂກດກັນຢູ່ ແຕ່ທ່ານເຫຼົ່ານັ້ນບໍ່ໂກດຕໍ່ຜູ້ໃດເລີຍ
ດັບ (ຄວາມໂກດ) ໄດ້ແມ່ນຕໍ່ບຸກຄົນຜູ້ໃຊ້ອາດຍາໃຫ້ຕົນ
ເມື່ອຊົນທັງຫຼາຍຍັງມີຄວາມຖືໝັ້ນ
ທ່ານເຫຼົ່ານັ້ນບໍ່ຖືໝັ້ນ
ມາຕະລີ ເຮົາຈຶ່ງນອບນ້ອມທ່ານເຫຼົ່ານັ້ນ

ມາຕະລີສັງຄາຫະກະເທບພະບຸດຂາບທູນ ວ່າ

ຂ້າແດ່ ທ້າວສັກກະ ໄດ້ຂ່າວວ່າ
ພຣະອົງຊົງນອບນ້ອມບຸກຄົນເຫຼົ່າໃດ?
ບຸກຄົນເຫຼົ່ານັ້ນເປັນຜູ້ປະເສີດທີ່ສຸດໃນໂລກ
ຂ້າແດ່ ທ້າວວາສະວະ ພຣະອົງຊົງນອບນ້ອມບຸກຄົນເຫຼົ່າໃດ
ແມ່ນຂ້າພຣະອົງກໍຂໍນອບນ້ອມແດ່ບຸກຄົນເຫຼົ່ານັ້ນຄືກັນ

ທ້າວມາຄະວາສຸຊັມບໍດີເທວະຣາຊະ ຜູ້ເປັນປະມຸກ
ເມື່ອຕັດດັ່ງນີ້ແລ້ວ ຊົງນອບນ້ອມພິກຂຸສົງ
ສະເດັດຂຶ້ນຣາດຊະລົດກັບໄປ

**ຕະຕິຍະກັກກະນະມັດສະນະສູດທີ ໑໐ ຈົບ**

**ວັກທີ ໔ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມເທວະສູດ | ໒. ທຸຕິຍະເທວະສູດ |
| ໓. ຕະຕິຍະເທວະສູດ | ໔. ທະລິດທະສູດ |
| ໕. ຣາມະເນີຍຍະກະສູດ | ໖. ຍະຊະມານະສູດ |
| ໗. ວັນທະນາສູດ | ໘. ປະຖົມສັກກະນະມັດສະນະສູດ |
| ໙. ທຸຕິຍະສັກກະນມັສສະນະສູດ | ໑໐. ຕະຕິຍະກັກກະນະມັດສະນະສູດ |

# ໓. ຕະຕິຍະວັກ

## ໝວດທີ ໓

## ໑. ຄັດຕະວາສູດ

### ວ່າດ້ວຍການຂ້າ

[໔໘໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ້າວສັກກະຈອມເທບສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວປະທັບຢືນຢູ່ບ່ອນທີ່ສົມຄວນ ທ້າວສັກກະຈອມເທບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

ບຸກຄົນຂ້າອັນໃດໄດ້ຈຶ່ງຢູ່ເປັນສຸກ
ຂ້າອັນໃດໄດ້ຈຶ່ງບໍ່ເສົ້າໂສກ ຂ້າແດ່ພຣະໂຄດົມ
ພຣະອົງຊົງພໍພຣະທະໄທການຂ້າທຳແນວໜຶ່ງ ຄືອັນໃດ

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ

ບຸກຄົນຂ້າຄວາມໂກດໄດ້ຈຶ່ງຢູ່ເປັນສຸກ
ຂ້າຄວາມໂກດໄດ້ຈຶ່ງບໍ່ເສົ້າໂສກ ທ້າວວາສະວະ
ພຣະອະຣິຍະທັງຫຼາຍສັນເສີນການຂ້າຄວາມໂກດ
ເຊິ່ງມີຮາກເປັນພິດ ມີຍອດຫວານ
ຍ້ອນບຸກຄົນຂ້າຄວາມໂກດນັ້ນໄດ້ແລ້ວ ຈຶ່ງບໍ່ເສົ້າໂສກ

**ຄັດຕະວາສູດທີ ໑ ຈົບ**

## ໔. ທຸບພັນນິຍະສູດ

### ວ່າດ້ວຍຍັກຜູ້ມີຜິວພັນບໍ່ງາມ

[໔໘໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ຍັກຕົນໜຶ່ງມີຜິວພັນບໍ່ງາມ ຕ່ຳຕ້ອຍ ນັ່ງຢູ່ເທິງທີ່ປະທັບຂອງທ້າວສັກກະຈອມເທບ ໄດ້ຂ່າວວ່າໃນບ່ອນນັ້ນ ພວກເທບຊັ້ນຕາວະຕິງສາພາກັນກ່າວໂທດຕຳໜິຕິຕຽນວ່າ ທ່ານຜູ້ຈະເລີນທັງຫຼາຍ ໜ້າອັດສະຈັນຈິງ

ບໍ່ເຄີຍຜາກົດ ຍັກຕົນນີ້ມີຜິວພັນບໍ່ງາມ ຕໍ່າຕ້ອຍ ແຕ່ນັ່ງຢູ່ເທິງທີ່ປະທັບຂອງທ້າວສັກກະຈອມເທບພວກເທບຊັ້ນດາວະດຶງສາກ່າວໂທດຕຳໜິຕິຕຽນດ້ວຍ ປະການໃດ ໆ ຍັກຕົນນັ້ນກັບເປັນຜູ້ມີຮູບງາມ ໜ້າເບິ່ງໜ້າຊົມ ແລະ ໜ້າເຫຼື້ອມໃສຍິ່ງຂຶ້ນກວ່າເດີມ ດ້ວຍປະການນັ້ນ ໆ

ພິກຂຸທັງຫຼາຍ ຄັ້ງນັ້ນ ພວກເທບຊັ້ນດາວະດຶງສາພາກັນເຂົ້າໄປເຝົ້າທ້າວສັກກະຈອມເທບຮອດບ່ອນຢູ່ ໄດ້ຂາບທູນທ້າວສັກກະຈອມເທບດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ຂໍປະທານວະໂຣກາດຍັກຕົນໜຶ່ງມີຜິວພັນບໍ່ງາມ ຕໍ່າຕ້ອຍ ນັ່ງຢູ່ເທິງທີ່ປະທັບຂອງພຣະອົງໄດ້ຂ່າວວ່າ ໃນບ່ອນນັ້ນພວກເທບຊັ້ນດາວະດຶງສາພາກັນກ່າວໂທດ ຕຳໜິ ຕິຕຽນວ່າ ທ່ານຜູ້ຈະເລີນທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຍັກຕົນນີ້ມີຜິວພັນບໍ່ງາມ ຕໍ່າຕ້ອຍ ນັ່ງຢູ່ເທິງທີ່ປະທັບຂອງທ້າວສັກກະຈອມເທບ ຂ້າແດ່ ພຣະອົງຜູ້ນິຣະທຸກ ພວກເທບຊັ້ນດາວະດຶງສາກ່າວໂທດຕຳໜິຕິຕຽນດ້ວຍປະການໃດ ໆ ແຕ່ຍັກຕົນນັ້ນກັບເປັນຜູ້ມີຮູບງາມ ໜ້າຊົມແລະໜ້າເຫຼື້ອມໃສຍິ່ງກວ່າເດີມ ດ້ວຍປະການນັ້ນ ໆ ຂ້າແດ່ ພຣະອົງຜູ້ນິຣະທຸກ ຍັກຕົນນັ້ນຄົງເປັນຜູ້ມີຄວາມໂກດເປັນອາຫານຢ່າງແນ່ນອນ ໂດຍຂ້ານ້ອຍ

ພິກຂຸທັງຫຼາຍ ຄັ້ງນັ້ນ ທ້າວສັກກະຈອມເທບ ສະເດັດເຂົ້າໄປຫາຍັກຜູ້ມີຄວາມໂກດເປັນອາຫານນັ້ນ ຈົນຮອດບ່ອນຢູ່ແລ້ວປະນົມມືໄປທາງທີ່ຍັກຕົນນັ້ນຢູ່ ປະກາດພຣະນາມ ໓ ຄັ້ງວ່າ ທ່ານຜູ້ນິຣະທຸກ ເຮົາຄືທ້າວ ສັກກະຈອມເທບ ຯລຯ ທ່ານຜູ້ນິຣະທຸກ ເຮົາຄືທ້າວ ສັກກະຈອມເທບ ຯລຯ ພິກຂຸທັງຫຼາຍ ທ້າວສັກກະຈອມເທບຊົງປະກາດພຣະນາມດ້ວຍປະການໃດ ໆ ຍັກຕົນນັ້ນ ກັບມີຜິວພັນບໍ່ງາມ ແລະ ຕໍ່າຕ້ອຍຍິ່ງກວ່າເດີມ ຍັກຕົນນັ້ນເປັນຜູ້ມີຜິວພັນບໍ່ງາມ ແລະຕໍ່າຕ້ອຍຍິ່ງກວ່າເດີມແລ້ວໄດ້ຫາຍໂຕໄປໃນບ່ອນນັ້ນເອງ

ຄັ້ງນັ້ນ ທ້າວສັກກະຈອມເທບປະທັບນັ່ງເທິງທີ່ປະທັບຂອງພຣະອົງແລ້ວ ເມື່ອຈະຊົງເຮັດໃຫ້ພວກເທບຊັ້ນດາວະດຶງສາຍິນດີ ຈຶ່ງຕັດຄາຖາເຫຼົ່ານີ້ໃນເວລານັ້ນ ວ່າ

ເຮົາເປັນຜູ້ມີຈິດບໍ່ຖືກໂທສະກະທົບ
ເປັນຜູ້ທີ່ໃຜ ໆ ຈະຊັກນຳໄປບໍ່ໄດ້ງ່າຍ
ເຮົາບໍ່ໂກດໃຜມາດົນແລ້ວ ຄວາມໂກດບໍ່ຝັງຢູ່ໃນໃຈເຮົາ
ເຖິງເຮົາໂກດກໍບໍ່ກ່າວຄຳຫຍາບ ແລະ ຄຳບໍ່ມັກເປັນອັນຂາດ
ເຮົາເຫັນປະໂຫຍດຕົນ ຈຶ່ງບັງຄັບຕົນໄດ້

**ທຸບພັນນິຍະສູດທີ ໘ ຈົບ**

# ໑. ສຳພະຣິມາຍາສູດ

## ວ່າດ້ວຍມາຍາຂອງຈອມອະສູນ

[໔໙໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວເວປະຈິດຕິຈອມອະສູນເຈັບໄຂ້ ໄດ້ຮັບທຸກເຈັບໄຂ້ໜັກ ຄັ້ງນັ້ນ ທ້າວສັກກະຈອມເທບສະເດັດໄປຢ້ຽມທ້າວເວປະຈິດຕິຈອມອະສູນຮອດບ່ອນຢູ່ ຕັດຖາມເຖິງຄວາມເຈັບໄຂ້ ທ້າວເວປະຈິດຕິຈອມອະສູນເຫັນທ້າວສັກກະຈອມເທບກຳລັງສະເດັດມາແຕ່ໄກ ໄດ້ກ່າວກັບທ້າວສັກກະຈອມເທບວ່າ ທ່ານຈອມເທບ ຂໍຈົ່ງຊ່ອຍຖືຮັກສາຂ້າພະເຈົ້າ ດ້ວຍເທີ້ນ

ທ້າວສັກກະຕັດ ວ່າ ທ່ານທ້າວເວປະຈິດຕິ ຂໍເຊີນບອກມາຍາຂອງຈອມອະສູນໃຫ້ຂ້າພະເຈົ້າຮູ້ກ່ອນ

ທ້າວເວປະຈິດຕິກ່າວວ່າ ທ່ານຜູ້ນິຣະທຸກ ຂ້າພະເຈົ້າຍັງບອກທ່ານບໍ່ໄດ້ ຈົນກວ່າຈະໄດ້ສອບຖາມພວກອະສູນເບິ່ງກ່ອນ

ລຳດັບນັ້ນ ທ້າວເວປະຈິດຕິຈອມອະສູນສອບຖາມພວກອະສູນວ່າ ທ່ານຜູ້ນິຣະທຸກທັງຫຼາຍ ເຮົາຈະບອກມາຍາຂອງຈອມອະສູນໃຫ້ທ້າວສັກກະຈອມເທບຮູ້

ພວກອະສູນທູນວ່າ ຂ້າແດ່ ພຣະອົງຜູ້ນິຣະທຸກ ພຣະອົງຢ່າຕັດບອກມາຍາຂອງຈອມອະສູນແກ່ທ້າວສັກກະຈອມເທບເລີຍ

ພິກຂຸທັງຫຼາຍ ຄັ້ງນັ້ນ ທ້າວເວປະຈິດຕິຈອມອະສູນໄດ້ກ່າວກັບທ້າວສັກກະຈອມເທບດ້ວຍຄາຖາ ວ່າ

ທ່ານທ້າວມະຄະວາສຸຊຳປະຕິເທວະຣາດ
ບຸກຄົນຜູ້ມີມາຍາຍ່ອມເຂົ້າເຖິງນະຣົກຄົບ ໑໐໐ ປີ
ຄືຈອມອະສູນ ສັນນັ້ນ

**ສຳພະຣິມາຍາສູດທີ ໑ ຈົບ**

# ໔. ອັດຈະຍະສູດ

## ວ່າດ້ວຍໂທດ

[໔໗໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸ ໒ ອົງໄດ້ໂຕ້ຖຽງກັນໃນການໂຕ້ຖຽງກັນນັ້ນ ພິກຂຸອົງໜຶ່ງໄດ້ເວົ້າລ່ວງເກີນ ຄັ້ງນັ້ນ ພິກຂຸຜູ້ເວົ້າລ່ວງເກີນນັ້ນຂໍໂທດໃນບ່ອນຢູ່ຂອງພິກຂຸນັ້ນ ແຕ່ພິກຂຸນັ້ນ ບໍ່ຍົກໂທດໃຫ້ ລຳດັບນັ້ນ ພິກຂຸຈຳນວນຫຼາຍ ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດພິກຂຸ ໒ ອົງ ໂຕ້ຖຽງກັນແລະໃນການໂຕ້ຖຽງກັນນັ້ນ ພິກຂຸອົງໜຶ່ງໄດ້ເວົ້າລ່ວງເກີນ ລຳດັບນັ້ນ ພິກຂຸຜູ້ເວົ້າລ່ວງເກີນຂໍໂທດໃນບ່ອນຢູ່ຂອງພິກຂຸນັ້ນ ແຕ່ພິກຂຸນັ້ນບໍ່ຍົກໂທດໃຫ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພິກຂຸທັງຫຼາຍ ຄົນພານ ໒ ຈຳພວກນີ້ ຄື

໑. ຜູ້ບໍ່ເຫັນໂທດວ່າເປັນໂທດ
໒. ຜູ້ບໍ່ຍົກໂທດໃຫ້ຕາມສົມຄວນແກ່ທຳເມື່ອຜູ້ອື່ນຂໍໂທດ

ຄົນພານມີ ໒ ຈຳພວກນີ້ແລ

ພິກຂຸທັງຫຼາຍ ບັນດິດ ໒ ຈຳພວກນີ້ ຄື

໑. ຜູ້ເຫັນໂທສວ່າເປັນໂທດ
໒. ຜູ້ຍົກໂທດໃຫ້ຕາມສົມຄວນແກ່ທຳເມື່ອຜູ້ອື່ນຂໍໂທດ

ບັນດິດມີ ໒ ຈຳພວກນີ້ແລ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເທບ ເມື່ອຈະຊົງຍັງເທບຊັ້ນ ດາວະດຶງສາໃຫ້ພອຍຍິນດີ ໃນເທວະສະພາຊື່ສຸທຳມາ ຈຶ່ງໄດ້ຕັດຄາຖານີ້ໃນເວລານັ້ນ ວ່າ

ຂໍຄວາມໂກດຈົ່ງຕົກຢູ່ໃນອຳນາດຂອງທ່ານທັງຫຼາຍ
ຂໍຄວາມເສື່ອມຄາຍໃນມິດຕະທຳຢ່າໄດ້ມີແກ່ທ່ານທັງຫຼາຍ
ທ່ານທັງຫຼາຍຢ່າໄດ້ຕິຕຽນຜູ້ທີ່ບໍ່ຄວນຕິຕຽນ[๑]
ແລະຢ່າໄດ້ເວົ້າຄຳສັບສໍ່ເລີຍ
ຄວາມໂກດເປັນຄືພູ ຍໍ່າຍີຄົນຊົ່ວໄດ້ ດັ່ງນີ້ແລ

**ອັດຈະຍະສູດທີ ໔ ຈົບ**

# ໕. ອັກໂກທະສູດ

## ວ່າດ້ວຍຄວາມບໍ່ໂກດ

[໔໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ໄວ້ ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເທບເມື່ອຈະຊີ້ງເຮັດໃຫ້ເທບຊັ້ນຕາວະຕິງສາຍິນດີ ໃນເທວະສະພາຊື່ ສຸທຳມາ ຈຶ່ງໄດ້ຕັດຄາຖານີ້ໃນເວລານັ້ນ ວ່າ

ຄວາມໂກດຢ່າໄດ້ຄອບງຳທ່ານທັງຫຼາຍ
ແລະທ່ານທັງຫຼາຍຢ່າໄດ້ໂກດຕອບຕໍ່ບຸກຄົນຜູ້ໂກດ
ຄວາມບໍ່ໂກດແລະຄວາມບໍ່ບຽດບຽນ໌
ຍ່ອມມີໃນທ່ານຜູ້ປະເສີດທຸກເມື່ອ
ຄວາມໂກດເປັນຄືພູ ຍ່ຳຍີຄົນຊົ່ວໄດ້ ດັ່ງນີ້ແລ

**ອັກໂກທະສູດທີ ໕ ຈົບ**

**ວັກທີ ໓ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

໑. ຄັດຕະວາສູດ
໒. ທຸບພັນນິຍະສູດ
໓. ສຳພະຣິມາຍາສູດ
໔. ອັດຈະຍະສູດ
໕. ອັກໂກທະສູດ

ພຣະສູດວ່າດ້ວຍທ້າວສັກກະ ໕ ສູດນີ້ ພຣະພຸດທະເຈົ້າ ຜູ້ປະເສີດຊົງສະແດງໄວ້ແລ້ວ

**ສັກກະສັງຍຸດ ຈົບບໍລິບູນ**

**ສະຄາຖະວັຄທີ ໑ ຈົບ**

# ລວມສັງຍຸດທີ່ມີໃນສະຄາຖະວັຄນີ້ ຄື

໑. ເທວະຕາສັງຍຸດ
໒. ໂກສະລະສັງຍຸດ
໕. ພິກຂຸນີສັງຍຸດ
໗. ພາມມະນະສັງຍຸດ
໙. ວະນະສັງຍຸດ
໑໑. ສັກກະສັງຍຸດ
໘. ເທວະປຸດຕະສັງຍຸດ
໔. ມາຣະສັງຍຸດ
໖. ພົມມະສັງຍຸດ
໘. ວັງຄີສະສັງຍຸດ
໑໐. ຍັກຂະສັງຍຸດ

**ສະຄາຖະວັກສັງຍຸດ ຈົບບໍລິບູນ**